# ນິທານ

## ນາງຕັນໄຕ

## ໑

ບັນທະປະກອນ



ຂອງ

ກົມວັນນະຄະດີ

ມະຫາສີລາ ວີຣະວົງສ໌

ຜູ່ຣິຈນາ

ພິມເທື່ອທີນຶ່ງ ຈຳນວນ ໕໐໐ ສະບັບ

ວຽງຈັນ, ພ.ສ. ໒໕໐໐

# ຄະນະກັມມະການວັນນະຄະດີ

--******--

| | | |
|---|---|---|
| ພະທ່ານ | ກຸ ອະໄພ | ປະທານກັມມະການກິດຕິມະສັກ |
| ພະທ່ານ | ຜຸຍ ປັນຍາ | ຮອງປະທານ " |
| ທ່ານ | ສົມຈິນ ປີແອງົນ | ປະທານກັມມະການຈັດການ |
| ພະທ່ານ | ບົງ ສຸວັນນະວົງ | ຮອງປະທານ " |
| ມະຫາ | ສີລາ ວີຣະວົງ | ເລຂານຸການ |
| ພະທ່ານ | ຫຍຸຍ ອະໄພ | ກັມມະການ |
| ທ້າວ | ເກື່ອງ ປະທຸມຊາດ | " |
| ພຍາ | ຄູນ ສີລາວັນ | " |
| ທ້າວ | ພູວົງ ພົມມະລອນ | " |
| ທ້າວ | ໜູທັກ ສິດທິນິລະດາ | " |
| ທ້າວ | ເກນ. | " |
| ມະຫາ | ພູມີ ຈິດພົງ | " |

----***********----

## ຄຳຊີ້ແຈງຂອງຜູ້ຣິຈນາ

ໜັງສືນິທານ ເຣື່ອງນາງຕັນໄຕນີ້ ແຕ່ເດີມຮຽກວ່າ ຄັມພີປັນຈະຕັນຕຣະ ຫລື ປັນຈະຕັນໄຕ ແປວ່າ ໜັງສື ໕ ຜູກ ແຕ່ທຸກວັນນີ້ເຫັນມີຢູ່ພຽງ ໔ ເຣື່ອງ ທີ່ນັ້ນ ຄື: ໑. ນັນທະປະກອນ (ເຣື່ອງງົວນັນທະກະ ກັບ ຣາຊສີເປັນສ່ຽວກັນ) ໒. ສະກຸນາປະກອນ (ເຣື່ອງນົກເລືອກນາຍ) ໓. ມັນທຸກະປະກອນ (ເຣື່ອງກົບ ກັບ ງູ ເປັນສ່ຽວກັນ) ໔. ປິສາຈະປະກອນ (ເຣື່ອງຜີເລືອກນາຍ).

ຄຳອາຣົບເບື້ອງຕົ້ນໃນປະກອນທີ ໒ ຄື ສະກຸນາປະກອນ ບອກວ່າ ໜັງສືປັນຈະຕັນຕະນີ້ ແມ່ນຣັດສີຊື່ ອະຕິທາສະກະ ເປັນຜູ້ຣິຈນາຂຶ້ນໃນປະເທດ ອິນເດັຽ ໂດຍຮຽບຮຽງເປັນພາສາສັນສະກຣິດ ແຕ່ໃນຣະຫວ່າງ ພ.ສ. ໑໒໐໐ ຕໍ່ມາໃນລະຫວ່າງ ພ.ສ. ໑໔໐໐ ຈຶ່ງມີຜູ້ແປເປັນພາສາອາຣັບ, ພາສາຫີບຣູ, ພາສາເກຣັກ, ແລະ ພາສາລາແຕງ ຕໍ່ໆມາ ຈົນເຖິງລະຫວ່າງ ພ.ສ. ໒໑໐໐ ຈຶ່ງມີຜູ້ແປເປັນພາສາເຢັຽຣະມັນ ແລ້ວແຜ່ຂຍາຍອອກເປັນພາສາຊາວຢູໂຣບເກືອບທຸກປະເທດທີ່ຈະເຣີນ ແຕ່ສະບັບທີ່ແປເປັນພາສາອັງກຣິດ ຜູ້ແປໄດ້ຕັ້ງຊື່ໜັງສືນີ້ໃໝ່ວ່າ Pilpay's fable (ນິທານຂອງປິລເປ) ສ່ວນສະບັບເປັນພາສາໄທໃຫ້ຊື່ວ່າ ຫິໂຕປະເທດ (ຂໍ້ອ້າງທີ່ເປັນປໂຍດ). ຫິໂຕປະເທດສະບັບຂອງໄທນັ້ນ ແບ່ງອອກເປັນ ໔ ພາກ ຄື: ໑. ມິຕຣະລາພ (ການຫາສ່ຽວ) ໒. ສຸຫະຣິທເພທ (ການແຕກມິດ) ໓. ສົງຄາມະ (ການສົງຄາມ) ໔. ສັນຕິ (ສງົບສົງຄາມ).

ສະບັບທີ່ແປເປັນພາສາລາວນີ້ ແຕ່ເດີມແມ່ນ ສົມເດັດພຣະສັງຄະຣາຊາ ວິຊຸລມະຫາວິຫາຣາທິປະຕີສີລັດນາຄະນະທຸດ ເຈົ້າອັດວິຊຸລມະຫາວິຫານ ເປັນຜູ້ແປອອກຈາກພາສາປາລີ ໃນລະຫວ່າງ ພ.ສ. ໒໐໕໐ ອັນເປັນສໄມຂອງ

ພຣະເຈົ້າວິຊຸລຣາດ ສະບັບພາສາປາລີ ຖ່າຍຖອດມາຈາກພາສາສັນສະກຣິດໂດຍ
ພຣະພິກຂຸຊາວລັງກາ ເປັນຜູ້ແປ ແລ້ວໄດ້ແຜ່ຂຍາຍເຂົ້າມາໃນປະເທດພະມ້າ,
ລາວ, ແລະ ໄທ ຕໍ່ມາ ສະບັບແປຂອງສົມເດັດພຣະສັງຄະຣາຊາວິຊຸລມະຫາ
ວິຫານ ນີ້ ບ່ອນເປັນພາສິດ ເພິ່ນໄດ້ເອົາສໂລກຄາຖາປາລີໃສ່ໄວ້ນຳ ແຕ່ຂ້າພະ
ເຈົ້າໄດ້ຕັດຄຳປາລີນັ້ນອອກເສັຽ ຫລືອໄວ້ແຕ່ຄຳແປເປັນພາສາລາວລ້ວນໆເພື່ອ
ໃຫ້ອ່ານເຂົ້າໃຈງ່າຍ ສ່ວນບົດພາສິດທີ່ເປັນຄຳໂຄງນັ້ນ ໄດ້ຮັກສາໄວ້ຕາມສຳ
ນວນເດີມ.

ເນື່ອງຈາກນິທານ ນາງຕັນໄຕ ຫລື ໜັງສືປັນຈະຕັນໄຕ ນີ້ ເປັນນິທານ
ສຸພາສິດທີ່ຈັບໃຈຫລາຍ ຈຶ່ງມີນັກປາດເກືອບທຸກປະເທດໃນໂລກ ແປອອກເປັນພາ
ສາຂອງຕົນດັ່ງກ່າວແລ້ວ ໃນລະຫວ່າງແປນັ້ນ ຜູ້ແປໄດ້ຕໍ່ຕັດດັດແປງແຕ່ງຕື່ມອີກ
ເປັນອັນມາກ ທັງໄດ້ຕັ້ງຊື່ໃໝ່ໄປກໍມີ ເຖິງດັ່ງນັ້ນ ຂໍ້ຄວາມທັງຫລາຍ ກໍຍັງຄ້າຍ
ຄືເປັນອັນນຶ່ງອັນດຽວກັນຢູ່.

ໜັງສືນິທານ ນາງຕັນໄຕ ທີ່ທ່ານກຳລັງອ່ານຢູ່ນີ້ ຂ້າພະເຈົ້າໄດ້ຮຽບຮຽງ
ຂື້ນຈາກສະບັບພາສາລາວ ທີ່ສົມເດັດພຣະສັງຄະຣາຊາວິຊຸລມະຫາວິຫາຣາທິປະຕີ
ແປໄວ້ ແລະ ໄດ້ຈັດແບ່ງເປັນ ໔ ຫລັ້ມຕາມສະບັບເດີມ ແຕ່ຕົ້ນເຣື່ອງໃນຫລັ້ມ
໑ ຄື ນັນທະປະກອນນີ້ ຮິຈນາເອົາຕາມເຄົ້າເຣື່ອງຂອງນິທານອາຫລັບຣາຕີ
ເພາະເຄົ້າເຣື່ອງໃນນັນທະປະກອນບໍ່ສູ້ສົມເຫດຜົນພໍປະມານ ແຕ່ຫາກມີເຄົ້າຄ້າຍ
ຄືກັນກັບຕົ້ນເຣື່ອງອາຫລັບຣາຕີຢູ່ ຈຶ່ງໄດ້ຕົກລົງຮິຈນາເອົາຕາມນັ້ນ.

ນິທານ ນາງຕັນໄຕ ເປັນນິທານສຸພາສິດທີ່ດີເລີດ ມີຂໍ້ຄວາມປຽບທຽບ
ສົມເຫດຜົນຖືກຕ້ອງແທ້ ຟັງໄດ້ທຸກກາລະສໄມ ເພາະສົມເປັນຄະຕິເຕືອນໃຈຂອງ
ຄົນທຸກຊັ້ນ ແລະ ທຸກຊາດ ທຸກພາສາ ນັບວ່າເປັນຢາອັນວິເສດ ສຳຫລັບແກ້ພຍາດ

ທາງຈິດໃຈຢ່າງປະເສີດ ພາໃຫ້ເກີດຜົນ ເປັນຄວາມສຸກແກ່ຜູ້ຖືເອົາເປັນຄະຕິ ຕໍ່ໄປ.

ມະຫາ ສີລາ ວີຣະວົງ

ພຣະນະຄອນວຽງຈັນ

ວັນທີ ໑ ມະກະຣາ ພ.ສ. ໒໕໐໐

## ນິທານ ນາງຕັນໄຕ

## ບັນທະປະກອນ

## ເຣື່ອງ ງົວນັນທະກະກັບຣາຊສີ

### ມູນເຫດເບື້ອງຕົ້ນ

ແຕ່ປາງກ່ອນ ຍັງມີນະຄອນນຶ່ງ ຊື່ ອຸໄທຍະນະມະຫານະຄອນ ບໍຣິບູນໄປດ້ວຍສົມບັດພັດສະຖານທຸກຢ່າງປານດັ່ງທິພສົມບັດໃນເມືອງຟ້າ, ພຣະມະຫາກະສັດທົງພຣະນາມວ່າ ວິມະລະຈັກກະພັດຕິຣາດ ສເວີຍຣາຊສົມບັດຢູ່ໃນນະຄອນນັ້ນ ພຣະອົງທະຣົງເດຊານຸພາບສູງສຸດ ມີອານາເຂດແຜ່ກວ້າງໄພສານໄປເກືອບທົ່ວຊົມພູທີບ ບ້ານເມືອງຂອງພຣະອົງໃນສໄມນັ້ນ ຈະເຣີນຍິ່ງໜັກໜາ ອານາປະຊາຣາສດອນຢູ່ເຢັນເປັນສຸກ ປາສຈາກຂ້າເສິກສັດຕູມາຮາວີ ພຣະຍາວິມະລະ ມີພຣະອະນຸຊາ (໑) ຢູ່ອົງນຶ່ງ ນາມວ່າ ວິຣະເສນ ເປັນທີ່ສເນຫາຮັກແພງຂອງພຣະອົງຍິ່ງນັກ ພຣະອົງຈຶ່ງທົງຕັ້ງ ທ້າວ ວິຣະເສນ ນັ້ນ ໃຫ້ໄປສເວີຍຣາຊສົມບັດຢູ່ໃນນະຄອນນຶ່ງ ອັນໄກຈາກອຸໄທຍະນະມະຫານະຄອນ; ຢູ່ມາຫລາຍປີ ພຣະຍາວິມະລະ ມີຄວາມຄຶດຮອດພຣະອະນຸຊາ ຈຶ່ງແຕ່ງອາມາດເປັນຣາຊທູດໄປເຊີນໃຫ້ມາຢາມ ທ້າວ ວິຣະເສນ ໄດ້ຊາບດັ່ງນັ້ນ ກໍດີພຣະໄທຈຶ່ງຕົກແຕ່ງກະບວນທັບຍົກອອກຈາກພຣະນະຄອນ ມາຕັ້ງຕານໄຊພັກເຊົາຢູ່ນອກພຣະຣາຊວັງ ໃກ້ກັບຕານໄຊຂອງຣາຊທູດ ເຖິງເວລາກາງຄືນເມື່ອສເວີຍໂພຊະນາຫານ ແລະ ສົນທະນາຢູ່ກັບຣາຊທູດຂອງພຣະເຊດຖາ (໒) ພໍສົມຄວນແລ້ວ ພຣະອົງກໍສະເດັດກັບຄືນເຂົ້າໄປໃນພຣະຣາຊວັງແຕ່ຜູ້ດຽວ ເພື່ອລາພຣະ

---

(໑) ພຣະອະນຸຊາ ແມ່ນນ້ອງຊາຍ (໒) ພຣະເຊດຖາ ແມ່ນພີ່ຊາຍ

ມະເຫສີທີ່ພຣະອົງຮັກແພງຍິ່ງອີກເທື່ອນຶ່ງ ເມື່ອສະເດັດຂຶ້ນໄປເຖິງຜາສາດ ກໍສະເດັດເລີຍໄປສ້ອມພຣະມະເຫສີ ໂດຍຕັ້ງພຣະໄທວ່າ ຈະໄດ້ເຫັນນາງສະແດງຄວາມສເນຫາອາໄລໃນຕົນດັ່ງແຕ່ກ່ອນມາ ແຕ່ເຫດການບໍ່ໄດ້ເປັນໄປດັ່ງຄຶດໄວ້ ພຣະອົງກັບໄດ້ເຫັນພຣະນາງນອນຢູ່ໃນອົງແຂນຂອງມະຫາດເລັກທີ່ມີຮ່າງກາຍກຳດຳ ກຳລັງກອດຈູບກັນຢູ່ເທິງຕຽງຄຳ, ພຣະອາຊາວີຣະເສນຕົກສະເງີ້ ເກືອບບໍ່ເຊື່ອສາຍຕາຕົນເອງ ພໍຕັ້ງສະຕິໄດ້ ຈຶ່ງຮ່ຳເພິງໃນໃຈວ່າ: "ອື! ນາງທີ່ກູຫລົງຮັກສຸດໃຈ ແຕ່ພໍກູໜີໄປບໍ່ທັນມິ້ນຄືນ ກໍມາເປັນຈັ່ງຊີ້ໄປໄດ້ ເຮັດໃຫ້ເສັ່ງໜ້າເສັ່ງສະກຸນກູພຣະອົງຍິ່ງນັກ" ຮ່ຳເພິງໄດ້ທີ່ນີ້ ກໍຖອດພຣະຂັນອອກຟັນຄໍຄົນທັງສອງຂາດຕາຍຢູ່ກັບບ່ອນ ແລ້ວສະເດັດອອກຈາກພຣະຣາຊວັງ ຍົກໄພ່ພົນໂຍທາໄປທາງນະຄອນອຸໄທຍະນະແຕ່ໃນຄືນນັ້ນ.

ເມື່ອສະເດັດໄປໃກ້ນະຄອນອຸໄທຍະນະ ພຣະຍາວີມະລະຈັກກະພັດຕິຣາດ (ພໍ່ຊາຍ) ພ້ອມດ້ວຍເສນາອາມາດ ກໍສະເດັດອອກມາຮັບຕ້ອນດ້ວຍຄວາມຍິນດີ ທັງສອງສີກະສັດກໍຖາມຂ່າວຄວາມສຸກຄວາມທຸກຂອງກັນແລ້ວ ກໍສະເດັດເຂົ້າໄປໃນນະຄອນ; ທ້າວ ວີຣະເສນ ມາເຫັນພຣະເຊດຖາແລ້ວ ແທນທີ່ຈະມີຄວາມຊື່ນຊົມຍິນດີ ກັບມີຄວາມທຸກໂສກທະວີຂຶ້ນ ເນື່ອງຈາກຄຶດເຖິງເຮື່ອງມະເຫສີຕົນຫລີ້ນຊູ້ ແຕ່ບໍ່ກ້າເວົ້າສູ່ພຣະເຊດຖາຟັງ ຝ່າຍພຣະເຊດຖາ ເຫັນອາການພຣະອະນຸຊາໂສກເສົ້າ ກໍສໍ້ຖາມ ແລະ ຫາທາງໃຫ້ພຣະອະນຸຊາຊື່ນໃຈຢູ່ສເມີ ແຕ່ພຣະອະນຸຊາກໍຍັງບໍ່ບອກ ແລະ ບໍ່ຫາຍຄວາມທຸກອັ້ງທັ້ງເທໄດ້.

ຢູ່ມາມື້ນຶ່ງ ພຣະຍາວີມະລະຈັກກະພັດຕິຣາດ ສະເດັດອອກໄປທ່ຽວປ່າເພື່ອເຊີດເນື້ອ ເປັນຫົນທາງໄກຈາກພຣະນະຄອນປະມານ ໖ ຄືນ ແລະ ໄດ້ຊວນທ້າວ ວີຣະເສນ ໄປນຳ ແຕ່ ທ້າວ ວີຣະເສນ ບ່ຽງບ່າຍບອກວ່າ ບໍ່ສຳບາຍ ຂໍຢູ່ໃນພຣະຣາຊວັງ, ຜາສາດບ່ອນທ້າວ ວີຣະເສນ ຢູ່ນັ້ນ ຊື່ກັນກັບຜາສາດຂອງ

ພຣະມະເຫສີ (ຜູ່ເປັນເອື້ອຍໃພ້) ໃນລະຫວ່າງກາງຜາສາດຂອງຫລັງນີ້ ມີອຸທຍານ (໑) ອັນປະດັບປະດາໄປດ້ວຍຕົ້ນດອກໄມ້ຕ່າງໆ ເຖິງຍາມແລງມີລົມພັດຫອບເອົາກິ່ນດອກໄມ້ເຂົ້າມາທາງເບື້ອງຊອນ (໒) ຈົນຫອມກຸ້ນ ແລະ ມີໝູ່ນົກຕ່າງໆຮ້ອງຢູ່ຊື່ອແຊວ ໃນຂນະນັ້ນ ທ້າວ ວີຣະເສນ ນັ່ງຢູ່ແຄມເບື້ອງຊອນຜີນໜ້າໄປທາງສວນເພື່ອທອດພຣະເນດສິ່ງຕ່າງໆໃຫ້ຫາຍໂສກ ທັນໃດນັ້ນ ກໍໄດ້ເຫັນຝາຕຶກຕູຜາສາດຂອງພຣະມະເຫສີແຫ່ງພີ່ຊາຍທາງກ້ຳສວນໄຂອອກ ພຣະນາງເທວີຜູ້ທຣົງໂສມອັນງາມສະເດັດລົງມາໃນສວນພ້ອມດ້ວຍສາວໃຊ້ ໔໐ ຄົນ ເພາະເວລານັ້ນ ພຣະນາງເຂົ້າໃຈວ່າ ທ້າວ ວີຣະເສນ ສະເດັດໄປເຊີດເບື້ອນກຳພຣະສາມີ (໓) ຂອງຕົນແລ້ວ ຄຶດສນຸກໃນໃຈວ່າຈະບໍ່ມີຜູ້ໃດມາເຫັນຈຶ່ງພາກັນລົງມາຫລິ້ນສນຸກສຸກສຳຣານຢູ່ໃນສວນໃກ້ກັບບ່ອນຢູ່ຂອງ ທ້າວ ວີຣະເສນ, ຝ່າຍ ທ້າວ ວີຣະເສນ ລອບເບິ່ງທາງເບື້ອງຊອນ ກໍໄດ້ເຫັນເຫດການຕ່າງໆທຸກປະການ ທຳອິດ ພຣະອົງຄຶດວ່າແມ່ນສາວສນົມທັງ ໔໐ ຄົນ ແຕ່ພໍພວກນັ້ນປົດເຄື່ອງແຕ່ງກາຍ ແລະ ຜ້າຄຸມຫົວອອກແລ້ວ ເລີຍເຫັນເປັນຊາຍ ໑໐ ຄົນ ຍິງ ໑໐ ຄົນຄົບຄູ່ກັນພໍດີ ຝ່າຍນາງເທວີ ເງີຍໜ້າຂຶ້ນໄປທາງຕົ້ນໄມ້ໃຫຍ່ພ້ອມກັບຕົບມືຮຽກວ່າ ເທວັດ! ເທວັດ! ສອງເທື່ອ ທັນທີນັ້ນ ຊາຍຄົນນຶ່ງຮູບຮ່າງແຂງແຮງລື້ມລັບ ກໍໄຕ່ງ່າໄມ້ລົງມາຫານາງ ຕໍ່ຈາກນັ້ນ ນາງເທວີ ແລະສາວສນົມ ກໍເຂົ້າຄູ່ກັບຊູ້ຮັກຂອງໃຜລາວ ພາກັນຫລິ້ນສນຸກສຸກສຳຣານຢອກໃຍກັນ ແລ້ວກໍເຂົ້າໄປບັງພຸ່ມໄມ້ເປັນຄູ່ໆ ເທິງສິນຄອນແລ້ວ ຊາຍຊື່ ເທວັດ ກັບໝູ່ຊາຍຊູ້ຂອງນາງສາວໃຊ້ທັງ ໑໐ ຄົນນັ້ນ ກໍພາກັນແລ່ນອອກທາງຕຶກຕູສວນແລ້ວປີນຂ້າມກຳແພງໜີໄປ.

---

(໑) ສວນ (໒) ປ່ອງຢ້ຽມ (໓) ຜົວ

ເຫດການທີ່ເຫັນເປັນມາຕໍ່ໜ້າດັ່ງນີ້ ພາໃຫ້ ທ້າວ ວິຣະເສນ ໄດ້ສະຕິ ແລະ ຄຶດຮ່ຳເພິງຢູ່ໃນພຣະໄທວ່າ: "ອື! ໜ້າໜ່າຍແທ້ ທີ່ກູມາມີຄິດເປັນທຸກວ່າ ກູເປັນຄົນມີເຄາະຮ້າຍແຕ່ຜູ້ດຽວ ທຸກກອງນີ້, ທຸກແບບນີ້, ຕ້ອງເປັນສິ່ງທີ່ໜັກອົກ ຂອງຜູ້ຊາຍຜູ້ເປັນສາມີທົ່ວໄປເປັນຄັກແນ່ ເບິ່ງດູ! ພຣະມະຫາກະສັດອົງເປັນພີ່ ຊາຍຂອງກູ ເຊິ່ງເປັນໃຫຍ່ຍິ່ງແກ່ປະເທດສະຣາດທັງຫລາຍ ກໍຍັງບໍ່ພົ້ນໄປໄດ້ ຊາຫງັງ! ກັບສືອກຜູ້ມືອວິບາກບັສຍຈະຫ້າມບໍ່ໃຫ້ເມັ່ງນອກໃຈໄດ້ ສະນັ້ນ ກູຈະມາ ເປັນທຸກດ້ວຍເຮື່ອງນີ້ບໍ່ໃຊ່ການ ເຊົາທຸກສັງເຖີດ ເຊົາໆ! ຕໍ່ແຕ່ນີ້ໄປຕືອກູຈະ ຣະວັງ ບໍ່ໃຫ້ເຮື່ອງດັ່ງນີ້ມາກວນໃຈອີກ" ຮ່ຳເພິງດັ່ງນີ້ແລ້ວກໍມີພຣະໄທຊື່ນບານ ຕັດສັ່ງໃຫ້ມະຫາດເລັກຍໍພານເວີຍມາໃຫ້ ວັນນັ້ນ ພຣະອົງສເວີຍໄດ້ຫລາຍ ແລະ ຟັງສຽງດົນຕີກໍເປັນທີ່ອອນຊອນຍິ່ງນັກ ພຣະພັກ (໑) ກໍເບີກບານເໝືອນແຕ່ກ່ອນ.

ພໍໄດ້ຊາບຂ່າວວ່າ ພຣະເຊດຖາສະເດັດກັບຈາກການເຊີດເບື້ອນມາເຖິງ ແລ້ວ ກໍສະເດັດໄປເຝົ້າ ພຣະເຊດຖາ ບໍ່ທັນໄດ້ສັງເກດເຫັນອາການປ່ຽນແປງ ຂອງພຣະອະນຸຊາ ກໍຕັດປາໄສວ່າ ໂຮ! ມ່ວນຫລາຍ ແຕ່ເສັ່ງດາຍທີ່ນ້ອງບໍ່ໄດ້ ໄປມ່ວນນຳ ຝ່າຍພຣະອະນຸຊາໄດ້ຟັງ ກໍປາໄສນຳດ້ວຍຄວາມສນຸກສນານເບີກ ບານໃຈ ຝ່າຍພຣະເຊດຖາ ໄດ້ເຫັນອາການຂອງພຣະອະນຸຊາຊື່ນຊົມດັ່ງນັ້ນ ກໍ ດີພຣະໄທ ແຕ່ສົງໄສວ່າ ເຫດໃດຈຶ່ງມາເປັນດັ່ງນີ້ ແລ້ວຕັດວ່າ: "ອ້າຍຂໍຂອບ ຄຸນເທວະດາຟ້າແຖນ ທີ່ມາປັ້ນດົນໃຫ້ເຈົ້າຫາຍໂສກເສົ້າໄດ້ໃນເວລາທີ່ອ້າຍບໍ່ຢູ່ ພຽງສອງວັນ ອ້າຍດີໃຈຫລາຍ ແຕ່ອ້າຍມີຄວາມສົງໃສ ຂໍຖາມເຈົ້າຈັກໜ່ອຍແດ່ ຄາດວ່າ ເຈົ້າຄົງບໍ່ອຳພາງອ້າຍ ຄືຕັ້ງແຕ່ວັນນ້ອງມາເຖິງນະຄອນຂອງອ້າຍ ອ້າຍ ເຫັນໜ້າເຈົ້າດູໂສກເສົ້າໝົ່ນໝອງໃຈ ອ້າຍກໍໄດ້ພຍາຍາມຊັກຊວນຫລິ້ນສນຸກຫລາຍ-

---

(໑) ພຣະພັກ ແມ່ນ ໜ້າ

ຢ່າງເພື່ອໃຫ້ຊື່ນໃຈ ກໍສັງເກດເຫັນເຈົ້າໂສກເສົ້າລົງກວ່າເກົ່າ ຄັນຈະສິຖາມຫາເຫດຫລາຍ ກໍຢ້ານເປັນທີ່ກວນໃຈ ແມ່ນເຈົ້າຄິດຮອດພຣະມະເຫສີບໍ້! ຫລືວ່າມີຄວາມທຸກອັ້ງແນວໃດອ້າຍກໍບໍ່ຮູ້ ມາມື້ນີ້ ເຫັນໜ້ານ້ອງແຈ່ມໃສ ຄວາມທຸກໃຈຂອງເຈົ້າຄົງສູນຫາຍໄປແລ້ວຢ່າງຄັກແນ່ ອ້າຍຢາກໃຫ້ນ້ອງເວົ້າສູ່ຟັງວ່າເຫດໃດມາເປັນດັ່ງນີ້."

ທ້າວວິຣະເສນໄດ້ຟັງດັ່ງນັ້ນ ກໍນິ່ງຄິດຢູ່ຄາວນຶ່ງ ແລ້ວທູນພີ່ຊາຍວ່າ "ຂໍເດຊະ ພຣະອົງເປັນພີ່ຊາຍຂອງຂ້າພະເຈົ້າ ແລະເປັນນາຍຂອງຂ້າພະເຈົ້າກໍຈິງ ແຕ່ເຣື່ອງນີ້ເປັນຄວາມລັບໃນໃຈຂອງໃຜລາວ ຍາກທີ່ຈະກາບທູນໄດ້ ຂໍພຣະອົງຢ່າບັງຄັບໃຫ້ເວົ້າເລີຍ" ພຣະຍາວິມະລະໄດ້ຟັງ ແຮ່ງເກີດຄວາມສົງໄສຫລາຍ ຈຶ່ງຕັດວ່າ "ນ້ອງຮັກຂອງອ້າຍ ນ້ອງຢ່າອຳອ້າຍເລີຍ ຈົ່ງເວົ້າໃຫ້ອ້າຍຟັງເທາະ ອ້າຍບໍ່ຖືໂທດຖືໄພຢ່າງໃດ ອະໄພໃຫ້ເຈົ້າທຸກຢ່າງ" ທ້າວວິຣະເສນຂັດບໍ່ໄດ້ ກໍທູນວ່າ ເມື່ອພຣະອົງມີປະສົງຢາກຮູ້ເຣື່ອງແທ້ ນ້ອງກໍຈະເວົ້າສູ່ຟັງບໍ່ອຶນພຣະໄທ ແລ້ວກໍເລົ່າເຣື່ອງພຣະມະເຫສີຂອງຕົນໃຫ້ພີ່ຊາຍຟັງທຸກປະການ ສຸດແລ້ວ ຈຶ່ງທູນວ່າ ເຫດຜົນດັ່ງກ່າວມານີ້ ພາໃຫ້ນ້ອງເປັນທຸກຫລາຍ ຂໍພຣະອົງຈົ່ງສັນນິດຖານເບິ່ງວ່າ ເປັນຂໍ້ທີ່ນ້ອງຄວນຈະໂສກເສົ້າຫລືບໍ່?

ພຣະຍາວິມະລະໄດ້ຟັງດັ່ງນັ້ນ ກໍມີພຣະໄທສົງສານພຣະອະນຸຊາເປັນອັນຍິ່ງ ຈຶ່ງຕັດວ່າ "ນ້ອງຮັກຂອງອ້າຍເອີຍ! ເຣື່ອງທີ່ເຈົ້າເວົ້າມານີ້ເປັນໜ້າເສັຽໃຈເຫລືອທີ່ສຸດ ອ້າຍບໍ່ມີຄວາມສົງໄສອີກແລ້ວ ອ້າຍຟັງເຈົ້າເວົ້າດ້ວຍຄວາມຮ້ອນໃຈຫລາຍ ເພາະຢາກຮູ້ກົກປາຍສາຍເຫດ ບັດນີ້ຄວນແລ້ວທີ່ເຈົ້າໄດ້ຂ້າມັນຕາຍທັງສອງຄົນ ຖືກຕ້ອງຕາມທຳນອງຄອງທັມດີແລ້ວ.

ຈະບໍ່ຊ້າແຕ່ພຽງສອງຄົນທີ່ນັ້ນດອກ ພ່າດເມັ່ນຕັ້ງພັນຄົນພຸ້ນຈຶ່ງຈະສົມຄວາມຄຽດ ອ້າຍເຫັນແລ້ວວ່າ ຄວາມທຸກຂອງເຈົ້ານັ້ນໃຫຍ່ຫລວງ ຮ້າຍແຮງຍິ່ງນັກ ແລະ ເຊື່ອວ່າ ຄົງມີແຕ່ເຈົ້າຜູ້ດຽວທີ່ນັ້ນທີ່ໄດ້ປະສົບທຸກໃນທຳນອງນີ້ ບັດນີ້ເທວະດາ ຟ້າແຖນ ໄດ້ບັນດານໃຫ້ເຈົ້າສວ່າງທຸກແລ້ວ ແຕ່ເພິ່ນໄດ້ບັນດານແນວໃດ ຈຶ່ງ ພາໃຫ້ເຈົ້າສວ່າງທຸກນັ້ນໄດ້ ຈຶ່ງເວົ້າໃຫ້ອ້າຍຟັງໃນຂໍ້ນີ້ດ້ວຍ" ທ້າວວິຣະເສນ ອຶດອັດຢູ່ໃນໃຈເຫີງເຕີບ ຄັນຈະບໍ່ເວົ້າ ພຣະເຊດຖາກໍຢາກຮູ້ ແລະທັງບັງຄັບ ໃຫ້ເວົ້າຈົນໄດ້ ຈຶ່ງທູນວ່າ "ເມື່ອພຣະອົງຢາກຮູ້ກໍຈະເລົ່າຖວາຍ ແຕ່ວ່າເມື່ອ ພຣະອົງໄດ້ຟັງແລ້ວ ພຣະອົງກໍຈະເສົ້າໂສກພຣະໄທບໍ່ໃຊ່ໜ້ອຍ ດັ່ງນັ້ນ ຂໍພຣະ ອົງໄດ້ໂປດປະທານອະໄພຍະໂທດໃຫ້ຂ້າພະເຈົ້າດ້ວຍ ໃນການທີ່ຈະທຳໃຫ້-ພຣະອົງຕ້ອງເສົ້າໂສກ."

ພຣະຍາວິມະລະຕັດວ່າ ທີ່ເຈົ້າເວົ້າຈັ່ງຊີ້ ແຮ່ງພາໃຫ້ອ້າຍຢາກຮູ້ ຫລາຍຂຶ້ນກວ່າເກົ່າ ເວົ້າໃຫ້ອ້າຍຟັງໄວໆເທາະ ເລື່ອງເປັນຢ່າງໃດ ອ້າຍ ຈະຂໍຟັງ.

ທ້າວວິຣະເສນ ບໍ່ສາມາດຈະອຳບັງພີ່ຊາຍໄວ້ໄດ້ ຈຶ່ງເລົ່າເລື່ອງ-ເອື້ອຍໄພ້ກັບນາງສາວໃຊ້ປະພຶດອະນາຈານຫລິ້ນຊູ້ຢູ່ໃນອຸທຍານໃຫ້ພີ່ຊາຍຟັງ ແລ້ວຊ້ຳທູນວ່າ ເມື່ອຂ້າພະເຈົ້າໄດ້ເຫັນເຫດການອັນແສນຊົ່ວຢ່າງນີ້ແລ້ວ ຈຶ່ງ ຄິດໃນໃຈວ່າ ຜູ້ຍິງທັງຫລາຍ ຄົງຈະມີນິໄສເບົ້າໄປໃນທາງຊົ່ວມົວເມົາ ຢູ່ໃນ ຣາຄະຕັນຫາ ບໍ່ສາມາດຕ້ານຄວາມມັກມາກໃນທາງກາມໃຫ້ນ້ອມໄປໃນທາງດີ ໄດ້ ຂ້າພະເຈົ້າຄິດວ່າ ຜູ້ຊາຍເຮົານີ້ບົກເບົາຫລາຍ ທີ່ມາມົວຫລົງໃຫລໃຝ່ຝັນ ຢູ່ໃນຄວາມບໍ່ຊື່ສັດຂອງສັດຕີ ດ້ວຍຄວາມຄິດດັ່ງນີ້ ຂ້າພະເຈົ້າຈຶ່ງຕັດຄວາມທຸກ ໃຈໃນເລື່ອງນີ້ໄດ້.

ພຣະຍາວິມະລະ ໄດ້ຟັງດັ່ງນັ້ນ ມີພຣະໄທຄຽດແຄ້ນເຫລືອກຳລັງ ຈຶ່ງຕັດວ່າ "ເອີດີນໍ! ນາງນະເຫສີຣາຊເທວີຜູ້ມີຍົດອັນຍິ່ງໃຫຍ່ ຊ່າງມີຫົວ-ໃຈຊື່ອຊ້າປະພຶດອະນາຈານໄດ້ເຖິງປານນີ້ ເຣື່ອງນີ້ເຮົາຕ້ອງພິສູດໃຫ້ເຫັນຈິງດ້ວຍຕາຕົນເອງ." ພຣະອະນຸຊາທູນວ່າ ເມື່ອພຣະອົງຢາກເຫັນຈິງ ກໍຂໍໃຫ້ທົງສງົບອາຣົມໄວ້ກ່ອນ ແລ້ວຈຶ່ງສັ່ງໃຫ້ຈັດການອອກປະພາດປ່າ ເພື່ອຫາລະເບີ້ອອີກໃນເວລານີ້ ແລະ ຂ້າພະເຈົ້າກໍຈະຕາມສະເດັດໄປດ້ວຍ ເມື່ອກາງວັນເຮົາພັກເຊົາຢູ່ໃນປ່າ ເຖິງເວລາຄ່ຳຈຶ່ງກັບມາລອບເບິ່ງທີ່ບ່ອນຂ້າ-ພະເຈົ້າຢູ່ ຄົງຈະໄດ້ເຫັນເຫດການຕ່າງໆຕາມທີ່ຂ້າພະເຈົ້າໄດ້ທູນມາ, ພຣະຍາວິມະລະເຫັນດີນຳ ຈຶ່ງຕັດສັ່ງໃຫ້ເສນາຈັດການສະເດັດປະພາດປ່າຕາມທີ່ເຄີຍມາ, ຮຸ່ງເຊົ້າມາພຣະກະສັດທັງສອງກໍສະເດັດອອກຈາກພຣະນະຄອນພ້ອມດ້ວຍບໍຣິວານ ໄດ້ພັກເຊົາຢູ່ຫານໄຊທີ່ໃນປ່າ ພໍເວລາຄ່ຳຕັດສັ່ງເປັນ-ຄວາມລັບ ໃຫ້ອາມາດຜູ້ໃຫຍ່ຢູ່ເຝົ້າຫານໄຊແທນຕົວ ແລະ ລະວັງກວດກາຢ່າໃຫ້ຜູ້ໃດອອກໄປຈາກຫານໄຊ ຈົນເຮົາພຣະອົງກັບມາ, ສັ່ງແລ້ວ ພຣະກະສັດທັງສອງ ກໍຂຶ້ນມ້າກັບຄືນມານະຄອນ ເຂົ້າລີ້ຊ່ອນຢູ່ໃນທີ່ປະທັບຂອງ-ທ້າວວິຣະເສນ ແລ້ວພາກັນບັນທົມຢູ່ທີ່ນັ້ນຕລອດຄືນ ພໍຈວນແຈ້ງ ສອງກະສັດຈຶ່ງເຂົ້າມາລີ້ຢູ່ແຄມຝາເບື້ອງຂວາບ່ອນທ້າວວິຣະເສນເຄີຍເຫັນເທື່ອກ່ອນ, ໃນຂນະທີ່ທັງສອງກະສັດນັ່ງຈອບມອງຢູ່ ກໍໄດ້ເຫັນພັກຕູໄຂອອກ ນາງເທວີລົງມາໃນສວນພ້ອມດ້ວຍສາວໃຊ້ ໑໐ ຄົນ ແລະ ຊາຍຊູ້ ໑໐ ຄົນ ເມື່ອນາງເທວີຕົນມີເອົາຊາຍຊື່ເທວັດມາແລ້ວ ຕ່າງຄົນກໍຕ່າງເຂົ້າຄູ່ກັນ ຕໍ່ຈາກນັ້ນເຫດການທັງຫລາຍ ກໍເປັນໄປເໝືອນດັ່ງທ້າວວິຣະເສນໄດ້ເຫັນມາແລ້ວທຸກປະການ; ເວລານັ້ນ ພຣະຍາວິມະລະ ເສັ້ງພຣະໄທເກືອບເປັນລົມລົ້ມລົງ ພີຍັ້ງສະຕິໄດ້ຈຶ່ງຕັດວ່າ ເອີ້ ໜ້າອັບອາຍເຫລືອລົ້ນພົ້ນປະມານແລ້ວ ເບິ່ງດູ!

ນະເຫລີຂອງກູ່ເປັນກະສັດທີ່ຍິ່ງໃຫຍ່ ຍັງມາເປັນໄປໄດ້ເຖິງປານນີ້ ໜ້າ-ໜ້າຍເປັນທີ່ສຸດເຫລືອເກີນ ເອີ້! ເມື່ອເຫດການເປັນດັ່ງນີ້ ຊາຍໃດໃນໂລກຈະເວົ້າອອດອ້າງວ່າຕົນມີຄວາມສຸກ, ວ່າແລ້ວກໍຫັນໜ້າມາເວົ້າກັບນ້ອງຊາຍວ່າ ນ້ອງເອີຍ! ເຮົາມາພາກັນສະລະຣາຊສົມບັດເສັຽເທາະ ເພາະວ່າສົມບັດທັງຫລາຍໃນໂລກນີ້ ບໍ່ມີສິ່ງໃດຈະທ່ຽງແທ້ແນ່ນອນເລີຍ ຊ້ຳບໍ່ໜຳຄວາມຊື່ສັດສຸຈຣິດຕໍ່ກັນກໍບໍ່ມີທີ່ປີກຮັ້ນ ເມື່ອຄວາມສັດບໍ່ມີຕໍ່ກັນ ຫລື ຖ້າຫາກມີກໍມີພຽງຍາມນຶ່ງຍາມດຽວພໍປານງູແລບລີ້ນ ບໍ່ເປັນຂອງໝັ້ນຄົງແນວໃດ ທັງຄວາມທີ່ໄດ້ເປັນເຈົ້າເປັນຈອມໃນດິນແດນແຄວ້ນເຂດອັນກວ້າງໃຫຍ່ໄພສານເຖິງປານນີ້ ກໍບໍ່ມີອຳນາດອັນໃດ ພໍຈະບັງຄັບໃຫ້ສັດທີ່ຊື່ສັດຕໍ່ເຮົາໄດ້ ພາໃຫ້ເຮົາໄດ້ຮັບຄວາມອັບອາຍຂາຍໜ້າຢ່າງເຫລືອລົ້ນດັ່ງນີ້ແລ້ວ ເຮົາຈະຢູ່ໃນຣາຊສົມບັດເພື່ອປໂຍດອັນໃດ? ແທງສູ້ເຮົາມາສະລະຄວາມຊື່ນມ່ວນ ອັນເປັນຂອງບໍ່ທ່ຽງນີ້ເສັຽ ແລ້ວໜີເຂົ້າປ່າ ໄປຫາລີ້ຊ່ອນຢູ່ໃນພົງໄພໄກເຂດມະນຸດ ຄົງຈະມີຄວາມສຸກດີກວ່າ ທັງຈະໄດ້ອຳພັງຄວາມອັບອາຍຂາຍໜ້າຂອງ-ເຮົານຳອີກ ເຈົ້າຈະເຫັນດີນຳບໍ່?

ທ້າວອິຣະເສນບໍ່ເຫັນດີນຳຄວາມຄິດຂອງພີ່ຊາຍ ແຕ່ຄິດເຫັນວ່າເວລານີ້ພີ່ຊາຍກຳລັງເສົ້າໂສກຢູ່ ຈຶ່ງພິຕິເວົ້າໂລຍຕາມໃຈວ່າ ຂ້າພະເຈົ້າກໍເຫັນດີດັ່ງດຽວກັນ ແຕ່ເຫດການອັນນີ້ຄົງຈະເປັນດ້ອຍເຄາະເຂັນເວນກັມ-ຂອງເຮົາ ເພາະສະນັ້ນ ຖ້າຈະໄປແທ້ ຂ້າພະເຈົ້າຂໍຄຳໝັ້ນສັນຍາໄວ້ຂໍ້ ໑ ຄືວ່າ ຖ້າເຮົາໄປພົບຄົນທີ່ມີເຄາະຮ້າຍຫລາຍກວ່າເຮົາແລ້ວ ຂໍໃຫ້ພຣະອົງພາຂ້າພະເຈົ້າສະເດັດກັບຄືນພຣະນະຄອນ ຍ້ອນວ່າ ສັດຕີໄພອັນໃຫຍ່ຫລວງນີ້ບໍ່ມີແຕ່ເຮົາສອງຄົນທີ່ນີ້ ຄວາມຈິງຕ້ອງເກີດມີແກ່ຄົນຊາຍທົ່ວໄປດັ່ງດຽວກັນ.

ພຣະຍາວິນະລະຕອບວ່າ ທີ່ຍອມໃຫ້ສັນຍາຕາມທີ່ເຈົ້າຮ້ອງຂໍ ແຕ່ພີ່ເຊື່ອແນ່ວ່າ ເຮົາຄົງຈະບໍ່ໄດ້ພົບພໍ້ຄົນທີ່ມີເຄາະຮ້າຍຍິ່ງກວ່າເລີຍ ວ່າ ແລ້ວກະສັດທັງສອງກໍໜີອອກຈາກພຣະຣາຊວັງທັນໜ້າ ເຂົ້າປ່າໄປອີກທາງນຶ່ງ ບໍ່ແມ່ນທາງໄປຫາຍາມໄຊ ທັງສອງໄດ້ດຳເນີນໄປລັຽງຫົນທາງຍືດຍາວ-ຄາວໄກ ຄັນຄ່ຳລົງກໍອາໄສນອນໃຕ້ຮົ່ມໄມ້ ຮຸ່ງເຊົ້າມາກໍພາກັນເດີນຕໍ່ໄປ ໄດ້ສອງຣາຕີ ຈຶ່ງໄປເຖິງທົ່ງຫຽ້າແຫ່ງນຶ່ງຢູ່ໃກ້ຝັ່ງທະເລ, ແລະເລາະແຄມທະເລນັ້ນ ມີປ່າໄມ້ໃຫຍ່ລຽນຊ້າຍລ້າຍຕາມແຄມຝັ່ງ, ກະສັດທັງສອງພາກັນເຂົ້າໄປພັກເຊົາຢູ່ໃຕ້ຮົ່ມໄມ້ໃຫຍ່ນັ້ນ ເມື່ອພາກັນທານນ້ຳນະດື່ມພໍເຊົາເມື່ອຍແລ້ວ ກໍສົນທະນາກັນເຖິງເລື່ອງຄວາມຊື່ວຊ້າອາສັດຂອງມະເຫສີທັງສອງ.

ໃນເວລາກຳລັງສາທິບເຖິງຄວາມທຸກອັນເກີດແຕ່ສັດຕີໄພຢູ່ນັ້ນ ກໍໄດ້ຍິນສຽງດັງຄຶກຄັກຂຶ້ນໃນພື້ນທະເລ ບຶດນຶ່ງກໍໄດ້ຍິນສຽງເໝືອນຄົນຮ້ອງໄຫ້ຮ່ຳໄຮເປັນທີ່ອື່ງເວ ພາໃຫ້ສອງກະສັດຕົກໃຈ ທັນໃດນັ້ນ ກໍເຫັນນ້ຳໃນທະເລອັນກວ້າງໃຫຍ່ເກີດເປັນວົງວຽນສວດຂຶ້ນ ແລ້ວກໍແຕກແຍກອອກໂດຍໄວ ສອງກະສັດຕົກຊະງັກຈົນຕົວສັ່ນ ເບິ່ງຢູ່ບຶດດຽວ ກໍເຫັນຮູບປລາດດຳເປັນລຳພົ້ນຂຶ້ນເປັນລຳດັບ ຕັ້ງຈົ້ງພົ້ງສູງທຽມເຕື້ອ ທັງສອງບໍ່ກ້າເບິ່ງຢູ່-ເຫິງໄດ້ ກໍພາກັນຟ້າວປີນຂຶ້ນໄປລີ້ຢູ່ລະຫວ່າງງ່າພາກຂອງຕົ້ນໄມ້ໃຫຍ່ ບຶດນຶ່ງຮູບດຳໃຫຍ່ເປັນລຳນັ້ນ ກໍມີຍອອກເປັນຍັກຕົວນຶ່ງ ລອຍຫາດໆເຂົ້າມາ-ຫາຝັ່ງ, ສອງກະສັດທັງຢ້ານທັງຢາກເຫັນ ພາກັນຈອບເບິ່ງຢູ່ ດາວນຶ່ງກໍເຫັນຍັກຕົວນັ້ນອັນມີອູບແກ້ວບັກໃຫຍ່ທູນທົວຢ່າງຂຶ້ນມາ ອູບແກ້ວນັ້ນມີກະແຈໃຫຍ່ ໔ ໜ່ວຍໃສ່ອ່ອນໄວ້ ແລ້ວຍັກຕົວນັ້ນກໍຍ່າງເຂົ້າມາເຊົາໃຕ້ຕົ້ນໄມ້ໃຫຍ່

ທີ່ສອງອ້າຍນ້ອງລີ້ຢູ່ນັ້ນ ສອງອ້າຍນ້ອງແນ່ນຈະຢ້ານປານໃດ ກໍເຫັນວ່າຈະໜີໄປບໍ່ພົ້ນ ຈຶ່ງຈຳໃຈອົດລີ້ຢູ່ເທິງງ່າພາກ ເໝືອນບໍ່ຢ້ານ.

ຍັກປົງຂຸບໃຫຍ່ລົງແລ້ວ ກໍນັ່ງລົງຂ້າງຂຸບ ໄຂກະແຈປົດຝາຂຸບນັ້ນອອກ ທັນໃດນັ້ນ ກໍເຫັນນາງງາມຮູບຮ່າງນ້ອຍຄົນນຶ່ງ ລຸກອອກມາຈາກຂຸບ-ແລ້ວນັ່ງລົງ ຍັກກໍໂຍນກາຍນັ່ງລົງຂ້າງນາງ ຕາເຄືອດໃສ່ນາງດ້ວຍຄວາມ-ຮັກ ແລ້ວເລົ່າໂລມວ່າ "ນີ້ນະ ນາງຢູ່ງາມເລີດ ຍ້ອນຄວາມຮັກເຈົ້າ ພີ່ຈຶ່ງໄດ້ອຸ້ມເຈົ້າມາແຕ່ໃນວັນວິວາຫະ(໑) ຄວາມຮັກທີ່ພີ່ມີຕໍ່ເຈົ້າຕັ້ງແຕ່ວັນນັ້ນມາຮອດວັນນີ້ ແນ່ນຈະໄດ້ຫລາຍເດືອນຫລາຍປີແລ້ວກໍຕາມ ກໍຍັງບໍ່ບົກເບົາລົງ-ເລີຍ ບັດນີ້ພີ່ເມື່ອຍຫລາຍ ຈະນອນໃຫ້ສວາຍຢູ່ໃຕ້ຕົ້ນໄມ້ນີ້ຈັກໜ່ອຍກ່ອນ ວ່າແລ້ວກໍເອົາຫົວໜູນຕັກນາງນອນ ຢຽດຂາໄປຈົນເຖິງຝັ່ງນ້ຳ ບໍ່ນານກໍຫລັບສຽງກົນກ້ອງປານສຽງລົມພັດນ້ຳເປັນຟອງດັງໂຫດໆ.

ໃນຂນະຍັກຫລັບຢູ່ນັ້ນ ນາງແຫນໜ້າຂຶ້ນໄປເທິງຕົ້ນໄມ້ ໄດ້ເຫັນສອງກະສັດລີ້ຢູ່ບ່ອນງ່າພາກ ກໍເກີດຄວາມຮັກຂຶ້ນໃນທັນທີ ຈຶ່ງກວັກມືເປັນສັນຍາໃຫ້ສອງກະສັດລົງມາຫາ ສອງກະສັດອ້າຍນ້ອງບໍ່ຄຶດວ່າ ນາງມີຄວາມຄເນຫາໃນເວລາອັນຈີ້ຈັ້ນໄດ້ເຖິງປານນີ້ ຄຶດວ່າ ນາງຈະປຸກຍັກຂຶ້ນມາກິນ ກໍມີຄວາມຢ້ານເປັນກຳລັງ ຈຶ່ງພະຍາຍາມບອກໃຫ້ເປັນສັນຍາອ້ອນວອນນາງຂໍໃຫ້ນາງເມດຕາພໍໃຫ້ລີ້ຢູ່ງ່າໄມ້ຕໍ່ໄປ ທັນໃດນັ້ນ ນາງເຈົ້າມາຍາ ກໍຄ່ອຍໆເອົາມືຊ້ອນຫົວຍັກອອກຈາກຕັກຂອງຕົນວາງລົງໄວ້ກັບໜ້າດິນ ແລ້ວລຸກຍ່າງໄປລົມສອງກະສັດດ້ວຍສຽງກະຊິບກະຊາບວ່າ "ເຊີນລົງມາເທາະນາ! ບໍ່ເປັນຫຍັງດອກ ຂ້າພະເຈົ້າຈະບໍ່ປຸກຍັກດອກນາ!" ສອງອ້າຍນ້ອງບໍ່ເຊື່ອໃຈພະຍາຍາມບອກນາງຢູ່ຢ່າງນັ້ນເປັນເທິງນານ ແຕ່ນາງບໍ່ຟັງສຽງ ເວົ້າຢືນ-

(໑) ວັນແຕ່ງດອງ.

ຄຳເປັນຊົງບັງຄັບວ່າ "ລົງມາເທາະນາ! ລົງມາໄວໆ ຖ້າອີ່ນີ້ຊ້າຢູ່ບໍ່ລົງ-ມາ ຈະປຸກຍັກຂຶ້ນໃຫ້ກິນເສັຽທັງສອງຄົນນີ້ແຫລະ", ສອງອ້າຍນ້ອງຟືນໃຈຂໍອອນນ່າງອີກລາງເທື່ອນາງເມດຕາ ແຕ່ກົງກັນຂ້າມ ນາງກັບສະແດງສີ-ໜ້າຄຽດແຄ້ນ ທຳທ່າຈະປຸກຍັກຂຶ້ນອີຫລີ ແລ້ວເວົ້າເປັນຄຳສຸດທ້າຍວ່າ "ດີແລ້ວ! ຖ້າບໍ່ລົງມາ ກໍເຫັນວ່າຮູບຮ່າງຂອງທ່ານທັງສອງທີ່ອ່ອນແອ້ນງາມຄືຜູ້ສາວນັ້ນ ຈະບໍ່ພົ້ນທ້ອງຂອງຍັກຕົວນີ້ໄດ້"

ສອງກະສັດເຫັນນາງບໍ່ລົງສານແທ້ແລ້ວ ກໍຕັດສິນໃຈລົງມາຫາແຕ່ໂດຍດີ ແຕ່ຍັງສັ່ນເທົາໆຢູ່ ນາງຍ່າງເຂົ້າມາດຶງເອົາແຂນສອງອ້າຍນ້ອງແລ້ວພາລັດເຂົ້າໄປໃນພຸ່ມໄມ້ ສະແດງຄວາມສເນຫາຕໍ່ສອງກະສັດ, ໃນຊັ້ນຕົ້ນສອງກະສັດບໍ່ກ້າປະຕິບັດຕາມຄວາມປະຕິພັດຂອງນາງ (໑) ນາງກໍ-ເລີຍໃຊ້ມາຍາບັງຄັບ ໂດຍອ້າງອຳນາດຂອງຍັກເໝືອນດັ່ງເກົ່າ ສອງກະ-ສັດພົດປັນຍາຈຳເປັນຕ້ອງປະຕິບັດຕາມຄວາມປະສົງຂອງນາງ ພໍສຳເລັດແລ້ວ ນາງເຫລືອບເຫັນແຫວນໃນນິ້ວມືຂອງສອງອ້າຍນ້ອງ ຈຶ່ງຂໍໄວ້ເບິ່ງຕາງໜ້າຄົນລະວົງ ແລ້ວນາງໄຂຕລັບຢິບພວງແຫວນຢູ່ໃນຕລັບນັ້ນມາໃຫ້-ເບິ່ງພ້ອມກັບຖາມວ່າ "ນີ້ແມ່ນຫຽັງ? ທ່ານທັງສອງຮູ້ບໍ່? ສອງອ້າຍນ້ອງບອກວ່າ "ບໍ່ຮູ້ ຂໍເຊີນນາງບອກໃຫ້ຮູ້ດ້ວຍ" ນາງຈຶ່ງບອກວ່າ "ຊາຍຜູ້ໄດ້ອຸດໜູນຄວາມປະສົງຂອງຂ້າພະເຈົ້າ ໄດ້ໃຫ້ແຫວນເລົ່ານີ້ໄວ້ຄົນລະວົງ ໃນພວງນີ້ມີແຫວນຢູ່ ໙໘ ວົງແລ້ວ ນີ້ສະແດງວ່າ ຂ້າພະເຈົ້າມີຄູ່ຮັກຜ່ານມາ-ແລ້ວມີ ໙໘ ຄົນ(ນອກຈາກຍັກຕົວນີ້) ຖ້າທ່ານສອງຄົນໃຫ້ອີກຄົນລະວົງ ກໍຈະເປັນ ໑໐໐ ວົງພໍດີ; ເມື່ອສອງກະສັດຖອດແຫວນໃຫ້ແລ້ວ ນາງເວົ້າຕໍ່ໄປວ່າ "ເບິ່ງເອົາເດີທ່ານ ເຖິງແມ່ນວ່າ ຍັກຕົວນີ້ມັນເປັນຜົວຂອງຂ້າພະ

(໑) ຄວາມກ້ຽວພັນ.

ເຈົ້າ ແລະ ມັນລະວັງຮັກສາຂ້າພະເຈົ້າໄວ້ຢ່າງແຂງແຮງ ຈົນເອົາຂ້າພະ-ເຈົ້າໃສ່ໄວ້ໃນຂຸບແກ້ວ ອັດກະແຈ ແລ້ວເອົາຖ່ວງລົງໄວ້ໃຕ້ລາຍປີທະເລພຸ້ນກໍຕາມ ຂ້າພະເຈົ້າຍັງສາມາດລັກລອບຫລົ້ນຊຸໄດ້ເຖິງ ໑໐໐ ຄົນ ·ແລ້ວ, ທ່ານຈຶ່ງເຂົ້າໃຈໄວ້ສາແຕ່ດຽວນີ້ວ່າ ເມື່ອສັດຕີມີເຈດຕະນາຈະເຮັດອັນໃດແລ້ວ ເປັນຕ້ອງເຮັດໃຫ້ສຳເຣັດຈົນໄດ້ ຊາຍຊູ້ ຫລື ຜົວບໍ່ສາມາດປ້ອງກັນຫລື ມ້າງເພຄວາມໂລບຂອງຜູ້ຍິງໄດ້ດ້ວຍການລະວັງຮັກສາ ຊາຍທັງຫລາຍບໍ່ຄວນຈະບັງຄັບບັນຊາຜູ້ຍິງຫລາຍ ຍ້ອນວ່າ ຈະຕັດຄວາມໂລບຂອງຜູ້ຍິງ ທີ່ເກີດຂຶ້ນແລ້ວໃຫ້ເຫືອດຫາຍໄປດ້ວຍການບັງຄັບບໍ່ທ່ອນສຳເຣັດ ຖ້າສັດຕີໃດມີໃຈຈະຮັກສາຄວາມບໍຣິສຸດຂອງຕົນແລ້ວ ກໍບໍ່ຈຳເປັນຕ້ອງລະວັງຮັກສາ ໃຫ້ເສັ້ງເວລາເລີຍ" ວ່າແລ້ວນາງກໍເອົາແຫວນສອງວົງນັ້ນຮ້ອຍເຂົ້າໃສ່ພວງ-ນຳໝູ່ ຍ່າງກັບຄືນໄປຫາຍັກ ບັ້ງລົງໂຈມຫົວຍັກຂຶ້ນໃສ່ຕັກຕາມເດີມ ແລ້ວງວາກໜ້າມາບອກໃຫ້ສອງອ້າຍນ້ອງຟ້າວໜີໄປ.

ພຣະຍາວິມະລະກັບພຣະອະນຸຊາ ຟ້າວສະເດັດກັບຄືນນຳທາງເກົ່າ ພໍພົ້ນລາຍຕາຂອງນາງຮ້ອຍຜົວມາແລ້ວ ຈຶ່ງລົມກັບພຣະອະນຸຊາວ່າ " ເຫດ-ການທີ່ເກີດປະຈັກແກ່ຕາເຮົານີ້ ນ້ອງຄິດວ່າຈັ່ງໃດ? ເບິ່ງແມ! ຍັກຜູ້ມີຣິດທານຸພາບຍິ່ງໃຫຍ່ ເປັນທີ່ຢຳແຢງຂອງມະນຸດທັງຫລາຍເທື່ອໄປເຖິງປານນີ້ ມັນກໍຍັງຫາເມັຽທີ່ຊື່ສັດບໍ່ໄດ້ ເຈົ້າຄິດເຫັນບໍ່ວ່າ ແມ່ນຫຍັງກໍບໍ່ທໍ່ຄວາມຊື່ຂອງສັດຕີ ອ້າຍເຊື່ອວ່າ ຄົງບໍ່ມີຜູ້ຊາຍຄົນໃດໃນໂລກ ທີ່ຈະໃຊ້ອຳນາດບັງຄັບຄວາມມີໃຈໂລເລຂອງສັດຕີໄດ້."

ທ້າວວິຣະເສນທູນວ່າ "ແມ່ນແລ້ວຂ້ານ້ອຍ ແລະ ພ້ອມກັບເຫດ-ການທີ່ໄດ້ເຫັນນີ້ ຂ້ານ້ອຍຂໍທູນວ່າ ຍັກຕົວນັ້ນມີເຄາະຮ້າຍກວ່າເຮົາຫລາຍ

ຖ້ານັ້ນຈະຈີ່ມວ່າ ໄດ້ຮັບໄພຈາກສັດຕີ ນັ້ນກໍຄົງມີເຣື່ອງທີ່ຈະຈີ່ມຫລາຍກວ່າເຮົາ ເພາະສະນັ້ນ ຂໍເຊີນພຣະອົງສະເດັດກັບຄືນພຣະນະຄອນເທາະເພາະພວກເຮົາໄດ້ພົບພໍ້ຊາຍທີ່ມີເຄາະຮ້າຍໃນເຣື່ອງສັດຕີຫລາຍກວ່າເຮົາແລ້ວ ດັ່ງໄປຂໍພຣະອົງຢ່າໄດ້ຖືເອົາຄວາມບໍ່ມີສັດຂອງຜູ້ຍິງມາເປັນອາຣົມໃຫ້ເກີດຄວາມພື້ນໝອງໃຈເລີຍ ສ່ວນມະເຫສີຂອງພຣະອົງນັ້ນ ພຣະອົງຈະໃສ່ໂທດສະຖານໃດ ຫລື ບໍ່ໃສ່ ນັ້ນ ກໍສຸດແລ້ວແຕ່ພຣະອົງເປັນ ແຕ່ການຈະອະພິ-ເສກກັບຍິງອື່ນໃໝ່ ແລະຈະຄິດປ້ອງກັນສະຖານໃດນັ້ນ ກໍສຸດແລ້ວແຕ່ພຣະ-ອົງອີກ, ສ່ວນຂ້າພະເຈົ້າຮູ້ຈັກວິທີຮັກສາຄວາມສຸຈຣິດຂອງສັດຕີທີ່ຈະມາເປັນເມັຽນັ້ນໄດ້ແລ້ວ ແຕ່ຈະບໍ່ກາບທູນໃຫ້ພຣະອົງຊາບໃນເວລານີ້." ພຣະຍາວິມະລະ ເຫັນດີນຳໃນການສະເດັດກັບຄືນພຣະນະຄອນ ຈຶ່ງພາກັນສະເດັດມາເຖິງຜານໄຊໃນເວລາຄ່ຳຂອງວັນຖ້ວນສາມ ເຖິງວັນຮຸ່ງເຊົ້າມາ ກໍເດີນໄພ່ພົນໂຍທາກັບຄືນພຣະນະຄອນດ້ວຍຄວາມເບີກບານໃຈ ພໍສະເດັດເຂົ້າໄປໃນພຣະຣາຊວັງ ກໍມີພຣະຣາຊດຳຣັດໃຫ້ທະຫານມະຫາດເລັກໄປຈັບນາງມະຫາເທວີຜູ້ອາສັດນັ້ນມາ ມອບໃຫ້ມະຫາອຳມາດເອົາໄປຂ້າຖິ້ມທັນທີ, ມະຫາອຳມາດຮັບພຣະຣາຊໂອງການແລ້ວ ກໍກຸມເອົານາງອຸບາລນັ້ນໄປທຸບຫົວເສັຽໂດຍບໍ່ຮູ້ຊ້ຳວ່າ ນາງມີໂທດຢ່າງໃດ ເມື່ອໃຫ້ປະຫານພຣະມະເຫສີແລ້ວ ພຣະຍາວິມະລະກໍຍັງບໍ່ຫາຍຄຽດ ສະເດັດເຂົ້າໄປໃນຜາສາດ ພົບນາງສາວໃຊ້ຂອງພຣະມະເຫສີເສັຽໃຫ້ນອນຕາຍກິ້ງເກືອກຢູ່ໃນຜາສາດນັ້ນທັງ ໑໐ຄົນ

ເມື່ອປະຫານສັດຕີອຸບາດ ໑໑ ຄົນນັ້ນສຳເຣັດແລ້ວ ພຣະຍາວິມະລະ ກໍທົງຕັ້ງພຣະໄທໄວ້ວ່າ ຕັ້ງແຕ່ນີ້ໄປ ເຮົາຈະຫານາງສາວມາເປັນເມັຽຄືນລະຄົນ ແຕ່ພໍຮຸ່ງແຈ້ງຂຶ້ນ ກໍຈະໃຫ້ຂ້ານາງນັ້ນເສັຽ ແລ້ວຫາໃໝ່ມານອນນຳຄືນລະຄົນເປັນທຳນອງນີ້ສເມີໄປ ແລະ ໂດຍອຸບາຍຢ່າງນີ້ ເຮົາຈຶ່ງຈະ

ນິເມັງທີ່ເປັນຜູ້ບໍຣິສຸດໄດ້ ເມື່ອພຣະອົງຄິດດັ່ງນີ້ແລ້ວ ກໍຕັ້ງພຣະໄທໄວ້ຢ່າງ-
ໝັ້ນຄົງວ່າ ຈະຕ້ອງປະຕິບັດຕາມຄວາມຄິດນັ້ນຕລອດໄປ.

ຝ່າຍພຣະອະນຸຊາພັກເຊົາຢູ່ນຳພຣະເຊດຖາພິສິນຄອນແລ້ວ ກໍສະ-
ເດັດກັບຄືນໄປນະຄອນຂອງຕົນ ເມື່ອພຣະອະນຸຊາກັບຄືນໄປແລ້ວ ພຣະຍາອິ
ນະລະ ກໍຕັດສັ່ງໃຫ້ມະຫາອຳມາດນຳເອົາລູກສາວຂອງນາຍພົນຄົນນຶ່ງ ເຂົ້າ
ມາຖວາຍ ມະຫາອຳມາດໄດ້ຮັບພຣະຣາຊໂອງການແລ້ວ ກໍປະຕິບັດຕາມ-
ພຣະຣາຊປະສົງ ພຣະຍາອິນະລະນອນນຳນາງນັ້ນຕລອດຄືນແລ້ວ ແຈ້ງມາກໍ
ບອກໃຫ້ເອົານາງນັ້ນໄປຂ້າເສັຽ ແລ້ວຕັດສັ່ງໃຫ້ຫານາງໃໝ່ມາໃຫ້ທຸກໆວັນ
ຖ້າຫາບໍ່ໄດ້ຕືອມະຫາອຳມາດແລະລູກເມັຽຈະຕ້ອງໄດ້ຮັບໂທດປະຫານພິດທັງ
ໂຄດ ເຫດການເປັນດັ່ງນີ້ ມະຫາອຳມາດກໍຈຳເປັນຕ້ອງຈັດການຕາມພຣະ-
ຣາຊປະສົງ ຄືຄືນທີສອງໄດ້ພາເອົາບຸດຕີຂອງນາຍທະຫານຊັ້ນຜູ້ນ້ອຍເຂົ້າໄປ
ຖວາຍ ຮຸ່ງແຈ້ງມາກໍໃຫ້ເອົານາງນັ້ນໄປຂ້າຖິ້ມຕາມເຄີຍ ຄືນທີສາມມາ ໄດ້
ພາເອົາບຸດຕີຂອງຂ້າຣາຊການຄົນນຶ່ງເຂົ້າໄປຖວາຍ ຄືນທີສີ່ໄດ້ເອົາບຸດຕີ-
ຂອງພໍ່ຄ້າ ແລະຄືນທີຫ້າ ໄດ້ເອົາບຸດຕີຂອງຊາວເມືອງ ເຫດການເປັນດັ່ງນີ້
ຕໍ່ໆໄປ ຈົນເກີດຄວາມເດືອດຮ້ອນຂ້ອນກະຫາຍແກ່ປະຊາຊົນພົລເມືອງທົ່ວໄປ
ຕັ້ງແຕ່ກ່ອນໆມາ ອານາປະຊາຣາສດອນທັງຫລາຍມີຄວາມໂຄຣົບນົບນ້ອມ
ແລະ ຮັກຫຸມພຣະມະຫາກະສັດເປັນອັນຍິ່ງ ພາກັນເວົ້າສໍຣະເສີນເຍີນຍໍຢູ່ບໍ່
ຂາດ ດ້ວຍວ່າພຣະອົງທົງພຣະເມດຕາກະຣຸນາຕໍ່ໄພ່ຟ້າຂ້າແຜ່ນດິນ- ດຸຈດັ່ງ
ໂອຣົດຂອງພຣະອົງເອງ ມາບັດນີ້ຂາວຄວາມໂຫດຮ້າຍທາຣຸນຂອງກະສັດນັ້ນ
ໄດ້ລືຊາຊາກິດໄປທົ່ວພຣະນະຄອນ ເສນາອາມາດຣາສດອນທັງຫລາຍພາກັນ

ສະດຸ້ງຕົກໃຈກົວຂົນຫົວລຸກທຸກຄົວເຮືອນ ເຫດການເປັນດັ່ງນີ້ ພວກອຳມາດຣາຊປຸໂຣຫິດທັງຫລາຍກໍບໍ່ສາມາດທູນຄັດຄ້ານໄດ້ ເພາະພຣະອົງໄດ້ຕັ້ງ-ພຣະໄທໄວ້ຢ່າງໝັ້ນໝາແລ້ວ.

ບັດນີ້ຈັກກ່າວເຖິງມະຫາອຳມາດຜູ້ມີໜ້າທີ່ຫານາງສາວມາຖວາຍພຣະຍາ ທ່ານອຳມາດຜູ້ນັ້ນມີລູກສາວຢູ່ສອງຄົນ ຜູ້ເອື້ອຍຊື່ນາງຕັນໄຕ ຜູ້ນ້ອງຊື່ນາງອິໄລວັນ. ນາງຕັນໄຕນັ້ນເປັນຜູ້ມີສິຣິລັກສະນະງາມເລີດ ທັງມີຄວາມຮູ້ແລະຜຍາປັນຍາຢ່າງຍອດຍິ່ງ ປະກອບດ້ວຍຄວາມກ້າຫານ ແລະຄວາມເມດຕາກະຣຸນາປານີແກ່ຄົນທົ່ວໆໄປ ສ່ວນນາງອິໄລວັນນັ້ນ ກໍງາມບໍ່ໃຊ່ໜ້ອຍເໝືອນກັນ. ທ່ານມະຫາອຳມາດມີຄວາມຮັກແພງນາງທັງສອງນີ້-ປານໜ່ວຍຕາ ຢູ່ມາມື້ນຶ່ງ ທ່ານມະຫາອຳມາດຄຶດເຖິງພຣະຣາຊອາຍາສັ່ງຂອງພຣະເຈົ້າແຜ່ນດິນໃນເຣື່ອງໃຫ້ຫານາງສາວໄປຖວາຍ ແລະນາງສາວທັງຫລາຍທີ່ໄປນອນນຳພຣະກະສັດນັ້ນ ຖືກຂ້າຕາຍທຸກໆວັນດ້ວຍມືຂອງທ່ານເອງ ທ່ານເລີຍເກີດຄວາມໂສກເສົ້າໝິ່ນໝອງໃຈ ບໍ່ເປັນອັນກິນອັນນອນເພາະເມື່ອຕົນເອງຫາບໍ່ໄດ້ວັນໃດ ວັນນັ້ນຕົວເອງກໍຕ້ອງຕາຍ ຖ້າຫາກຫາໄດ້ສເມີໄປທຸກໆວັນ ກຸລສັດຕີທັງຫລາຍໃນນະຄອນອຸໄທຍະນະກໍຈະດັບສູນ ປະຊາກອນຈະພາກັນເດືອດຮ້ອນເຫລືອກຳລັງ ເຫດທັງສອງປະການນີ້ ພາໃຫ້ທ່ານອຸກອັ່ງຈົນຈ່ອຍຜອມລົງ ນາງຕັນໄຕເຫັນບິດາໂສກເສົ້າໝິ່ນໝອງໃຈຈຶ່ງເຂົ້າໄປຫາພໍ່ແລ້ວເວົ້ານຳພໍ່ວ່າ "ຂໍໂທດນຳຍາພໍ່ ດຽວນີ້ລູກສັງເກດ-ເຫັນວ່າ ພໍ່ຄົງມີຄວາມອຸກອັ່ງຫລາຍ ໃນເຣື່ອງພຣະຣາຊອາຍາຂອງພຣະເຈົ້າແຜ່ນດິນ ສະນັ້ນ ເຣື່ອງນີ້ລູກຂໍຮັບອາສາຕັດຮາກເຫງົ້າຂອງຄວາມຊົ່ວຮ້າຍແຫ່ງພຣະເຈົ້າແຜ່ນດິນນັ້ນເສັຽ ຍາພໍ່ຈະເຫັນວ່າຢ່າງໃດ?"

ມະຫາອຳມາດຖາມວ່າ "ລູກຄິດເຮັດຢ່າງໃດ? ພໍ່ເຫັນວ່າການທີ່ເຈົ້າຈະຮັບອາສາຫາທາງຕັດຄວາມຊົ່ວຮ້າຍຂອງພຣະຣາຊານັ້ນ ບໍ່ມີທາງຈະເຮັດໄດ້ເລີຍ" ນາງຕັນໄຕຕອບວ່າ "ແມ່ນພໍ່ບໍ່! ເປັນເຈົ້າໜ້າທີ່ຫາຍຢິ່ງ ເຂົ້າໄປຖວາຍພຣະເຈົ້າແຜ່ນດິນທຸກວັນ ຖ້າດັ່ງນັ້ນວັນຕໍ່ໆໄປ ກໍໃຫ້ພໍ່ເອົາລູກນີ້ ເຂົ້າໄປຖວາຍເພິ່ນກໍແລ້ວກັນ ດ້ວຍວິທີນີ້ທີ່ນັ້ນລູກຈະຕັດຮາກເຫງົ້າຂອງຄວາມໂຫດຮ້າຍແຫ່ງພຣະເຈົ້າແຜ່ນດິນລົງໄດ້."

ມະຫາອຳມາດໄດ້ຍິນລູກສາວເວົ້າດັ່ງນັ້ນ ກໍເວົ້າຂັດຂື້ນໃນທັນທີວ່າ "ລູກຮັກຂອງພໍ່ເອີຍ ເປັນຫຍັງເຈົ້າຈິ່ງເວົ້າຈັ່ງຊີ້ ບໍ່ແມ່ນລູກເປັນບ້າແລ້ວຫວະ ການທີ່ເຈົ້າຂັນອາສາເຂົ້າໄປທຳການຄາວນີ້ ເຈົ້າບໍ່ຮູ້ຫລືວ່າ ພຣະກະສັດເພິ່ນໄດ້ຕັ້ງພຣະໄທໄວ້ແລ້ວວ່າ ຈະມີເມັຽນອນຮ່ວມແຕ່ພຽງຄືນດຽວທີ່ນັ້ນ ຄັນແຈ້ງມາເພິ່ນໃຫ້ເອົາໄປຂ້າຖິ້ມເສັຽແລ້ວຫາເອົາໃໝ່ ພຣະອົງບໍ່ຍອມນອນຮ່ວມກັບຍິງຄົນດຽວສອງຄືນເປັນອັນຂາດ ເຣື່ອງນີ້ເຈົ້າກໍຮູ້ຢູ່ເຕັມອົກແລ້ວ ເຫດໃດຈິ່ງມາຂັນອາສາເຂົ້າໄປຫາໄຟ ຈົ່ງຮ່ຳຮອບເບິ່ງໃຫ້ດີກ່ອນ" ນາງຕັນໄຕຕອບວ່າ "ລູກຮ່ຳຮອບເບິ່ງດີແລ້ວ ຮູ້ວ່າອັນຕະຣາຍຢ່າງໃຫຍ່ຫລວງນັ້ນ ຈະເກີດລາມມາເຖິງລູກຄືກັນ ແຕ່ວ່າຄວາມຢ້ານກົວຕໍ່ໄພອັນໃຫຍ່ຫລວງນີ້ ບໍ່ສາບາດຂັດຂວາງຄວາມຄິດຂອງລູກໄດ້ ລູກຈະຕ້ອງເຮັດຕາມທີ່ຄິດໄວ້ຈົນໄດ້ ຖ້າວ່າຕາຍກໍໄດ້ຊື່ວ່າຕາຍຢ່າງສົມກຽດຕິຍົດຢ່າງແທ້ຈິງ ຖ້າແມ່ນທຳການສຳເຣັດກໍຈະໄດ້ຊື່ວ່າ ເປັນຜູ້ໄດ້ທຳຄຸນອັນໃຫຍ່ຍິ່ງແກ່ປະເທດຊາດຂອງຕົນ."

ມະຫາອຳມາດເວົ້າຢືນຄຳວ່າ "ບໍ່ໄດ້ ບໍ່ໄດ້ ໃນເຣື່ອງນີ້ເຖິງເຈົ້າຈະເວົ້າຢ່າງໃດ ພໍ່ກໍບໍ່ຍອມອະນຸຍາດໃຫ້ເຈົ້າເຮັດຕາມຄວາມຕັ້ງໃຈຂອງເຈົ້າໄດ້ ພໍ່ຈະປະເຈົ້າໃຫ້ຕົກຢູ່ໃນອັນຕະຣາຍຢ່າງຂົນຫົວລູກນັ້ນບໍ່ໄດ້ເປັນອັນຂາດ

ໂອ! ໃຫ້ລູກຄິດເບິ່ງຄັກໆດີ! ຄິດເບິ່ງໃຫ້ດີວ່າ ເມື່ອເວລາພຣະກະສັດ-ຕັດສັ່ງໃຫ້ພໍ່ເອງເປັນຜູ້ຂ້າເຈົ້າ ພໍ່ຈະຂັດຄຳສັ່ງໄດ້ຫລື ເຖິງແມ່ນເຈົ້າຈະບໍ່ສະທ້ານຢ້ານຕໍ່ຄວາມຕາຍກໍຕາມ ແຕ່ລູກຕ້ອງຄິດເຫັນແດ່ວ່າ ໜ້າວຽກຂອງພໍ່ນີ້ໜັກພໍປານໃດ ພໍ່ຈະຕ້ອງເປັນຜູ້ຂ້າລູກທີ່ສຸດຮັກດັ່ງດວງໃຈ ດ້ວຍດາບຂອງຕົນເອງ ພໍ່ຈະຝືນໃຈອົດທົນຕໍ່ຄວາມສຍອງຢ່າງແສນສາຫັດນັ້ນ-ຢ່າງໃດໄດ້" ຝ່າຍນາງຕົນໄຕ ໄດ້ຍິນພໍ່ຫ້າມດັ່ງນັ້ນກໍບໍ່ຍອມ ຍັງຂືນໄຫວ້ວອນພໍ່ຢູ່ ຂໍໃຫ້ພໍ່ພ້າວພາໄປຖວາຍພຣະເຈົ້າແຜ່ນດິນຈົນໄດ້ ມະຫາອຳມາດຄິດຄຽດຂຶ້ນ ຈຶ່ງເວົ້າໃຫ້ລູກສາວວ່າ "ເຈົ້ານີ້ດື້ຫລາຍ ອ້ອນວອນຢູ່ບໍ່ເຊົາ ເວົ້າໃຫ້ຟັງທີ່ໃດແຮ່ງພົ້ນ ຄົນແບບນີ້ດີແຕ່ຄ້ອນໃສ່ຫລັງຈັກສອງສາມບາດ ປານກັນກັບເມັ້ງພໍ່ນາບັ້ນແຫລະ ມັນຈຶ່ງຈະເຊົາອ້ອນວອນ" ນາງຕົນໄຕຖາມພໍ່ວ່າ "ເມັ້ງພໍ່ນາເປັນຢ່າງໃດ? ມະຫາອຳມາດຕອບວ່າ "ເຈົ້າຈົ່ງຟັງພໍ່ຈະເວົ້າໃຫ້ຟັງດຽວນີ້"

## ນິທານປະກອບເຫດ

## ເຣື່ອງເມັ້ງຂອງພໍ່ນາ

ແຕ່ປາງກ່ອນ ມີຊາວນາຄົນນຶ່ງ ເປັນຄົນຮັ່ງມີ ໄດ້ລ້ຽງສັດຕ່າງໆໄວ້ຫລາຍຈຳພວກ ເປັນຕົ້ນ ງົວ, ຄວາຍ, ລໍ, ໝູ,ໝາ ແລະເປັດໄກ່-ເປັນອັນມາກ ຕໍ່ມາພໍ່ນາຄົນນັ້ນໄດ້ໄປເປັນສ່ຽວກັບຜີ ຜີຈຶ່ງສອນວິຊາຮູ້ຈັກພາສາສັດເວົ້າກັນໃຫ້ສ່ຽວ ຜີໄດ້ໃຫ້ພໍ່ນາຜູ້ນັ້ນສາບານວ່າ ຈະບໍ່ເວົ້າເຣື່ອງທີ່ສັດເວົ້າກັນນັ້ນໃຫ້ຜູ້ອື່ນຟັງເປັນອັນຂາດ ຖ້າເວົ້າຂຶ້ນເວລາໃດ ຈະຕ້ອງຕາຍໃນເວລານັ້ນະ ເຖິງຣະດູເຮັດນາ ພໍ່ນາຜູ້ນັ້ນພາເມັ້ງຂອງຕົນອອກໄປນອນນາເພື່ອຄອບຄຸມພວກລູກນ້ອງ ແລງວັນນຶ່ງພໍ່ນາຍ່າງໄປທາງຄອກງົວ

ໄດ້ຍິນງົວກັບລໍເວົ້າກັນຈຶ່ງຢຸດຢືນຟັງ ງົວ ເວົ້າກັບ ລໍ ວ່າ "ສ່ຽວເອີຍ! ເຮົາເຫັນໂຕມີຄວາມສຸກສະບາຍຫລາຍກວ່າເຮົາ ວຽກການແນວໃດກໍບໍ່ໄດ້-ເຮັດໜັກ ມີໜ້າທີ່ແຕ່ພຽງໃຫ້ນາຍຂີ່ໄປທຸຣະທີ່ນັ້ນ ນອກນີ້ຍັງມີຄົນຄອຍເບິ່ງແຍງລ້ຽງເກືອ ບໍ່ໃຫ້ອຶດຢາກ ຫຍ້າທີ່ເຂົາໃຫ້ກິນກໍມີແຕ່ຫຍ້າອ່ອນໆ ນ້ຳກໍໃສສະ-ອາດດີ ຄອກນອນກໍບໍ່ແປດເປື້ອນຂີ້ຕົມ ສ່ວນເຮົາແສນທຸກ ຕ້ອງເຮັດວຽກໃຫ້ນາຍແຕ່ເຊົ້າຈົນຄ່ຳ ບໍ່ທັນແຈ້ງເຂົາກໍຈັບໄປແກ່ໄຖ ຄົນໄຖກໍໃຈຮ້າຍທຸບຕີ ບໍ່ປານີ ສ່ຽວເອີຍ! ເບິ່ງຄໍກັບແດ່ ໂປກພິດແລ້ວ ຈົນບໍ່ມີຂົນເພາະແອກຖູ ໄຖມາແລ້ວກໍເອົາໄປລ່າມໃສ່ເດີ່ນຫຍ້າທົ່ງນາໆແລະແຂງມີແຕ່ຕໍ ກັດກໍບໍ່ຂາດ ຍາມແລງຈັບມັດໄວ້ໃນຄອກອັນມີແຕ່ຕົມ ແລະຮີ້ນຍຸງກໍເຫລືອຫລາຍ ຫາຄວາມສະບາຍໜ້ອຍນຶ່ງບໍ່ມີ ບາດຝ່າຍໂຕຍູ່ທາງນອນກິນຂອງແຊບໆຈົນລ່ວງເບັ້ງ ກັບເຫລືອໃຈແທ້ໆ."

ລໍ ໄດ້ຟັງງົວຈົ່ມທຸກດັ່ງນັ້ນ ຈຶ່ງເວົ້າຂຶ້ນວ່າ "ໂຕມັນໂງ່ ບໍ່ສລາດຫາຄວາມສະບາຍໃສ່ໂຕເອງ ທັງບໍ່ມີໃຈນາບະກ້າແຂງສົມກັບຕົນຕົວທີ່ໃຫຍ່ ທັງມີເຂົາອັນແຫລມເປັນອາວຸດຢ່າງວິເສດນັ້ນດ້ວຍ ຖ້າໂຕຢາກສະບາຍຕ້ອງເຮັດນຳອຸບາຍ ເຮົາຈະບອກໃຫ້ ຄື : ເວລາເຂົາຈະມາຈັບໄປໃສ່ໄຖ ໂຕກໍຕ້ອງທຳທ່າຂຶງຂັງ ງ່ຽງເຂົາໃສ່ທຳທ່າຮ້າຍຈະຊົນ ຫລື ຖີບເຕະກໍໄດ້ ຫລືບໍ່ດັ່ງນັ້ນ ເມື່ອເຂົາເອົາຫຍ້າເອົານ້ຳມາໃຫ້ກິນ ກໍທຳທ່າເຈັບ ດົມໆເບິ່ງແລ້ວກໍຢ່າກິນ ພຽງທີ່ນີ້ເຂົາກໍຈະເຫັນວ່າໂຕປ່ວຍ ແລ້ວເຂົາຈະບໍ່ໃຊ້ງານໂຕ ໂຕກໍຈະໄດ້ຮັບຄວາມສະບາຍທີ່ນັ້ນເອງ." ງົວ ໄດ້ຮັບຄວາມແນະນຳດັ່ງນັ້ນແລ້ວກໍຮັບວ່າຈະເຮັດນຳຕັ້ງແຕ່ວັນຮຸ່ງເຊົ້ານີ້ໄປ ເມື່ອລົມທະນາກັນພໍຄວນແລ້ວສັດທັງສອງ ກໍເລີຍງຶບຫລັບໄປ ພໍ່ນາຍູ່ນັ້ນໄດ້ຍິນສັດທັງສອງເວົ້າກັນ ກໍຈື່ຈຳ

ໄວ້ທຸກຖ້ອຍຄຳ ແລ້ວກັບມາສັ່ງລູກຈ້າງນາໄວ້ວ່າ ມື້ອື່ນເຊົ້າຖ້າງົວມັນພະຍົດບໍ່ເຂົ້າຫງຽນໄຖໂດຍດີ ໃຫ້ສູເອົາລໍມາໄຖແທນງົວກໍແລ້ວກັນ.

ຕື່ນເຊົ້າມາ ເມື່ອລູກຈ້າງເຂົ້າໄປຈູງເອົາງົວມາໄຖນາ ງົວກໍສະແດງອາການພະຍົດດັ່ງທີ່ໄດ້ຕົກລົງກັນໄວ້ກັບລໍ ລູກຈ້າງຜູ້ນັ້ນຈຶ່ງມາເອົາລໍໄປໃສ່ໄຖຕາມຄຳສັ່ງຂອງນາຍ ລໍຖືກເຂົາເອົາໄຖນາຈົນຄ່ຳ ເມື່ອຍລ້າເກືອບ-ຕາຍ ບໍ່ໜຳລໍບໍ່ເຄີຍຖືກໄຖນາ ຍ່າງບໍ່ໄວ ແລະ ໄປບໍ່ແມ່ນຮ່ອງ ອ້າຍລູກ-ຈ້າງຈຶ່ງເອົາແສ້ຟາດເສັ່ງຈົນຫລັງໂກ່ ພໍເຂົາປົດຈາກໄຖ ຍ່າງກັບມາຄອກເກືອບລົ້ມ ມາເຖິງຄອກກໍມີແຕ່ຫຍ້າແຫ້ງໄວ້ໃຫ້ກິນ ບ່ອນນອນກໍບໍ່ມີເຟືອງປູອ້າຍລໍຄຶດອຶດອູໃຈໂຕເອງຈົນນ້ຳຕາໄຫລ ຝ່າຍງົວໄດ້ພັກງານ ກໍມີຄວາມສະບາຍ ຫຍ້ານ້ຳອາຫານອັນເປັນຂອງລໍ ກໍກັບມາເປັນຂອງງົວ ງົວໄດ້ຮັບຄວາມສະບາຍ ກໍຄຶດຂອບຄຸນສະຫາຍລໍເປັນອັນມາກທີ່ໄດ້ຊ່ອຍບອກອຸບາຍໃຫ້ໃນວັນຖ້ວນສອງ ງົວພີດີເຈັບ ໂດຍບໍ່ກິນຫຍ້າກິນນ້ຳ ພວກລູກຈ້າງເຫັນດັ່ງ-ນັ້ນ ຈຶ່ງເອົາລໍໄປໃສ່ໄຖອີກ ລໍ. ໄດ້ຮັບຄວາມລຳບາກເກືອບຕາຍເໝືອນໃນວັນກ່ອນ ຈຶ່ງຄຶດຮຳເພິງຢູ່ແຕ່ໃນໃຈວ່າ ອັນນີ້ເປັນຄວາມໂງ່ຂອງເຮົາເອງທີ່ຫາຄວາມທຸກມາໃສ່ໂຕ ຄວາມທຸກທີ່ກູໄດ້ຮັບຢູ່ດຽວນີ້ ບໍ່ເປັນຍ້ອນຫຍັງ! ເປັນຍ້ອນກູເຂົ້າໄປກ່ຽວຂ້ອງໃນກິຈການຂອງຄົນອື່ນອັນບໍ່ແມ່ນໜ້າທີ່ຂອງກູຖ້າກູຄຶດແກ້ໄຂຄວາມໂງ່ນີ້ບໍ່ໄດ້ ກໍເຫັນຈະຕ້ອງລຳບາກຕລອດຊາດເປັນແທ້.

ຝ່າຍພໍ່ນາໄດ້ຊາບວ່າ ເຂົາໃຊ້ງານລໍຈົນເກືອບຕາຍ ກໍຢາກຮູ້ຄວາມຄຶດ ແລະອຸບາຍຂອງສັດທັງສອງອີກຕໍ່ໄປ ດັ່ງນັ້ນ ເມື່ອກິນແລງແລ້ວໃນວັນນັ້ນ ຈຶ່ງຊວນເມັຽໄປນັ່ງຫລົບຢູ່ແຄມຄອກງົວ ແລະ ລໍ ກໍພໍດີໄດ້ຍິນລໍ ເວົ້າກັບ ງົວ ວ່າ "ສ່ຽວເອີຍ! ຫວ່າງທ່ຽງວັນນີ້ ກຳລັງເຮົາໄຖນາຢູ່

ໄດ້ຍິນນາຍສັ່ງກັບພວກລູກຈ້າງ ເປັນຄວາມສຳຄັນຂັ້ນຶ່ງ ກ່ຽວເຖິງໂຕ ພາດເອົາເຮົາຕົກໃຈຈົນຂີ້ເກືອບແຕກ ເພາະຢ້ານໄພຈະມາເຖິງສ່ຽວ" ງົວ ບໍ່ທັນຮູ້ກົນຂອງລີ ກໍຕົກໃຈຟ້າວຖາມວ່າ "ນາຍສັ່ງວ່າຈັ່ງໃດ ບອກມາໂວ" ລີໄດ້ຫາດັ່ງນັ້ນ ກໍພິຕິລົງສາບງົວ ພ້ອມກັບເວົ້າວ່າ "ສ່ຽວເອີຍ! ເຮົາໄດ້ຍິນນາຍສັ່ງພວກລູກຈ້າງວ່າ ຖ້າເຫັນງົວບໍ່ກິນຫຍ້າ ມີອາການປ່ວຍຢູ່ອີກແລ້ວ ຂໍໃຫ້ຈັດການຂ້າເສັຽ ເອົາຊີ້ນແຈກຢາຍກັບກິນດີກວ່າຈະໃຫ້ຕາຍລ້າ ແລ້ວເພິ່ນໄດ້ສັ່ງໃຫ້ເພັຊຄາດມາແຕ່ເຊົ້າດ້ວຍ ນີ້ແຫລະສ່ຽວເອີຍ! ເຮົາຢ້ານນຳໂຕຫລາຍແທ້ໆ ເຮົາສົງສານໂຕຫລາຍເຕັມທີ ເພາະເຮົາເປັນສະຫາຍກັນ-ມານານ ຄັນມີເຫດການເກີດຂຶ້ນເຖິງໂຕດັ່ງນີ້ ກໍຄືກັບກັບເກີດຂຶ້ນແກ່ເຮົາ ດັ່ງນັ້ນເຮົາຈຶ່ງໄດ້ຄິດຫາຫົນທາງທີ່ຈະຊ່ວຍຊີວິດຂອງໂຕຢູ່ສເມີ" ຝ່າຍງົວບໍ່ຮູ້ກົນອຸບາຍຂອງລີ ພໍໄດ້ຊາບວ່າເຂົາຈະຂ້າຕົວ ກໍມີຄວາມກົວເປັນອັນມາກ -ຈຶ່ງໄຫວ້ວອນລີ ຂໍໃຫ້ບອກອຸບາຍອັນຈະພາໃຫ້ພົ້ນຄວາມຕາຍສູ່ຟັງ ລີຈຶ່ງແນະນຳວ່າ "ມື້ອື່ນເຊົ້າເມື່ອຄົນລ້ຽງເອົານ້ຳແລະຫຍ້າມາໃຫ້ກິນ ໂຕຮີບຟ້າວກິນເສັຽໂດຍດີ ພໍນາຍຮູ້ກໍຈະເຂົ້າໃຈວ່າໂຕເຊົາເຈັບແລ້ວ ແລ້ວເຂົາຈະສັ່ງ-ງົດໃນການທີ່ຈະປະຫານໂຕເສັຽ ດ້ວຍອຸບາຍນີ້ ໂຕກໍຈະພົ້ນຈາກຄວາມຕາຍໄດ້" ງົວໄດ້ຟັງດັ່ງນັ້ນ ກໍຮັບວ່າຈະປະຕິບັດຕາມທຸກປະການ.

ຝ່າຍພີ່ນາໄດ້ຍິນງົວກັບລີເວົ້າກັນມາແຕ່ຕົ້ນ ໄດ້ເຫັນຄວາມສລາດມີອຸບາຍຂອງລີ ແລະຄຶດເຫັນຄວາມໂງ່ຂອງງົວທີ່ຫລົງເຊື່ອນຳອຸບາຍຂອງລີ ກໍອົດຫົວເອົາບໍ່ໄດ້ ຈຶ່ງຫົວກ້າກຂຶ້ນໂດຍແຮງ ພາໃຫ້ເມັຽຜູ້ບໍ່ຮູ້ຈັກກົກປາຍສາຍ-ເຫດສົງໄສ ຈຶ່ງຖາມວ່າ "ເຈົ້າຫົວຂວັນຫຍັງຕີ? ບອກຂ້ອຍແນ! " ຜົວບໍ່ຮູ້ຈະວ່າຢ່າງໃດ ຈຶ່ງບອກເມັຽວ່າ "ນ້ອງຈົ່ງຟັງພີ່ຫົວທີ່ນັ້ນກໍພໍແລ້ວ ຢ່າຖາມ

ຢ່າງອື່ນເລີຍ, ຝ່າຍເມັ່ງກໍບໍ່ຍອມ ຊັກໄລ່ໄຕ່ຖາມຫາເຫດທີ່ພາໃຫ້ຫົວນັ້ນຢູ່ບໍ່ເຊົາ ດ້ວຍເຈົ້າຜົວກໍບອກໄດ້ແຕ່ພຽງວ່າຫົວຂວັນງົວກັບລໍ ສ່ວນຄວາມອື່ນນອກຈາກນີ້ບອກບໍ່ໄດ້ ຖ້າບອກຂ້ອຍຕ້ອງຕາຍ. ພໍ່ນາບອກຄວາມຈໍາເປັນໂດຍສັດຈິງອັນນີ້ ກໍຫວັງວ່າເມັ່ງຈະເຊົາຊັກໄລ່ໄຕ່ຖາມ ແຕ່ກັບເຮັດໃຫ້ເມັ່ງມີຄວາມປລາດໃຈ ແລະ ສົງໄສຕື່ມຂື້ນອີກ ຄັນນາງໄຫ້ວອນຜົວທີ່ໃດກໍບໍ່ບອກ ນາງຈຶ່ງເວົ້າຂັດຂື້ນວ່າ "ຂ້ອຍບໍ່ເຊື່ອເຈົ້າດອກ ທີ່ເຈົ້າວ່າມີຄວາມຈໍາເປັນບອກບໍ່ໄດ້ ເຈົ້ານັ່ງຢູ່ດີໆກໍຫົວຂື້ນກ້າກໆ ບໍ່ມີເຫດມີຜົນຈະຫົວເປັນບໍ່! ແລະບອກເຫດທີ່ພາໃຫ້ຫົວນັ້ນທີ່ນັ້ນ ບໍ່ແມ່ນແນວພໍຄໍຂາດບາດຕາຍເລີຍ ການທີ່ເຈົ້າບອກວ່າຫົວຂວັນງົວກັບລໍນັ້ນ ເຫັນຈະບໍ່ແມ່ນແນ່ນອນ ເພາະງົວກັບລໍມັນກໍຢູ່ຊື່ໆ ບໍ່ເຫັນເຮັດຫຍັງກັນພໍເປັນໜ້າຢາກຫົວ ເຈົ້າຕ້ອງມີເຫດແນວນຶ່ງເປັນແທ້ ເອີ! ຖ້າເຈົ້າບໍ່ບອກ ຂ້ອຍຂໍສາບານຕໍ່ໄຟດຽວນີ້ວ່າ ເຮົາຈະຢູ່ກິນນໍາກັນຍືນຍາວໄປບໍ່ໄດ້ ເພາະຖ້າຜົວເມັ່ງປົກປິດອໍາພາງຄວາມລັບແກ່ກັນແລ້ວ ຈະຢູ່ນໍາກັນໄດ້ຢ່າງໃດ ເວົ້າແລ້ວກໍລຸກຂື້ນຍ່າງປັດກົ້ນແລ່ນເຂົ້າໃນເຮືອນອັດຜັກຕູນອນຮ້ອງໄຫ້ ສະເອກສະອື້ນຢູ່ຕລອດຄືນ ຝ່າຍຜົວນອນຢູ່ນອກຢູ່ດຽວຈົນແຈ້ງ ຄັນຕື່ນຂື້ນເຫັນເມັ່ງຍັງບໍ່ຫັນເຊົາຄຽດ ຈຶ່ງອອຍວ່າ "ນ້ອງບໍ່ຄວນຮ້ອງໄຫ້ໂສກເສົ້າເສັຽໃຈໃຫ້ເປັນທຸກລ້າ ເພາະພີ່ໄດ້ບອກແລ້ວວ່າ ບອກບໍ່ໄດ້ຖ້າຂືນບອກພີ່ຕ້ອງຕາຍ ແລະເລື່ອງກໍເປັນເລື່ອງເລັກນ້ອຍ ຖ້ານ້ອງບໍ່ຢາກໃຫ້ພີ່ຕາຍ ກໍຢ່າຖາມອີກເລີຍ."

ຝ່າຍເມັ່ງເຫັນຜົວເວົ້າຈັ່ງຊັ້ນຊໍ້າພັດແຮ່ງໄດ້ໃຈ ເວົ້າໃຫ້ຜົວວ່າ ຖ້າບໍ່ບອກເປັນບໍ່ຍອມເດັດຂາດ ຜົວຕອບວ່າ ໄດ້ບອກແລ້ວບໍ່ແມ່ນບໍ໋! ວ່າຖ້າຂ້ອຍບອກຂ້ອຍຕ້ອງຕາຍ! ນາງເມັ່ງເວົ້າແດກໃຫ້ຜົວວ່າ ເຈົ້າຈະຕາຍ ຫລືຈະຍັງ

ກໍສຸດແລ້ວ ຖ້າບໍ່ບອກຂ້ອຍກັບເຈົ້າເປັນເລີກກັນແຕ່ດຽວນີ້ເລີກເປັນຜົວເປັນເມັຽກັນໂລດ ຜົວເຫັນວ່າຈະເວົ້າໃຫ້ເມັຽຍິນຍອມໂດຍລຳພັງໂຕເອງບໍ່ໄດ້ ຈຶ່ງໄປຫາພີ່ນ້ອງຝ່າຍຕົນແລະຝ່າຍເມັຽມາເວົ້າຊ່ອຍ ແລະຊີ້ແຈ້ງເຫດຜົນໃຫ້ຟັງໂດຍ-ຕລອດ ເຖິງພໍ່ແມ່ພີ່ນ້ອງຈະມາເວົ້າຢ່າງໃດ ນາງກໍບໍ່ຍອມຢູ່ຫາດຽວ ແຖມຍັງເວົ້າອີກວ່າ ເຖິງຈະຂ້າໃຫ້ຕາຍກໍບໍ່ຍອມ ຈະຕ້ອງຂໍຮູ້ຄວາມລັບ-ໃນໃຈຂອງຜົວໃຫ້ໄດ້ ວ່າແລ້ວກໍຮ້ອງໄຫ້ຕີອົກຕີຫົວ, ຝ່າຍລູກຂອງນາງເຫັນແມ່ຮ້ອງໄຫ້ບໍ່ຟັງສຽງໃຜເວົ້າ ກໍຈົນໃຈບໍ່ຮູ້ຈະຊ່ອຍແມ່ໄດ້ຢ່າງໃດ ກໍເລີຍຮ້ອງໄຫ້ນຳເປັນແຊວໆ ຊາວບາຜູ່ເປັນພີ່ພົດປັນຍາ ບໍ່ຮູ້ວ່າຈະຫລຽວໜ້າໄປເບິ່ງໃຜໄດ້ ໄດ້ຍິນແຕ່ສຽງຮ້ອງໄຫ້ຢູ່ອ້ອມຂ້າງ ມີຄວາມທຸກໃຈຫລາຍຈຶ່ງລຸກອອກໄປຢູ່ນອກຊານ ຄຶດຕຶກຕອງໄປວ່າ ຄວນຈະບອກດີ ຫລື ບໍ່ບອກດີ ຖ້າບອກຕາມຈິງແລ້ວ ຕົວເອງກໍຈະຕ້ອງຕາຍເປັນແນ່ ຄັນຈະບໍ່ບອກກໍເຫັນວ່າ ນາງເມັຽຈະເສົ້າໂສກຸກອັ່ງຫລາຍຈົນເຖິງກັ້ນໃຈຕາຍກໍອາດເປັນໄດ້.

ມະຫາອຳມາດເວົ້າກັບນາງຕັນໄຕຕໍ່ໄປວ່າ ລູກເອີຍ! ພໍ່ໄດ້ເວົ້າມາ-ແລ້ວວ່າ ພໍ່ນາຍູ້ນັ້ນລ້ຽງສັດໄວ້ຫລາຍຈຳພວກ ນອກຈາກສັດອື່ນໆແລ້ວ ຍັງມີໄກ່ແມ່ອີກ ໕໐ ຕົວ ໄກ່ຜູ້ຕົວ ໑ ແລະ ໝາທີ່ຊື່ສັດຮູ້ຈັກຄຸນນາຍອີກຕົວ ໑ ໃນຂນະທີ່ພໍ່ນາກຳລັງນັ່ງຄຶດຕຶກຕອງຢູ່ວ່າຈະເຮັດແນວໃດດີນັ້ນ ກໍໄດ້ຍິນສຽງໝາເວົ້າປາອີບກັບໄກ່ຜູ້ວ່າ "ອ້າຍໄກ່ເອີຍ! ເຈົ້ານີ້ຄືຊອາຍບໍ່ເປັນດອກ ຊາງບໍ່ຮູ້ຈັກອັບອາຍຂາຍໜ້າຈັກດີ້ ມີແຕ່ທຳທ່າປັ້ນປັ້ນັງນໍໃສ່ຕົວແມ່ຢູ່ຊູ່ຍາມ ບໍ່ມີແລ້ງມີຢືນ ນົວເນົາຢູ່ແຕ່ໃນຕົ້ນຫາ ເບິ່ງແຕ່ໃນມື້ນີ້ກໍຍັງເອົາຢູ່."

ໄກ່ໄດ້ຍິນໝາເວົ້າແດກດັນໃຫ້ດັ່ງນັ້ນ ຈຶ່ງຕອບດ້ວຍທ່າທາງມີລ່ງວ່າ ໃຜຈະມາຫ້າມເຮົາໄດ້ ເຮົາມີຄວາມພໍໃຈຈະເຮັດແນວໃດອັນເປັນແນວທີ່ເຮົາ-

ນັກແລ້ວ ກໍບໍ່ເຫັນວ່າຜູ້ໃດຈະມີອຳນາດວ່າກ່າວຫ້າມຫອງເຮົາໄດ້ ທັງໃນວັນນີ້ ແລະວັນໃດກໍຕາມ.

ໝາຕອບໄກ່ວ່າ "ເອີ! ທີ່ເຈົ້າເວົ້າຈັ່ງຊີ້ຄືເຈົ້າຊິບໍ່ຮູ້ຈັກນີ້! ວ່າມື້ນີ້ນາຍຂອງເຮົາເປັນທຸກໜັກເຕັມທີ ເພາະນາຍຜູ້ຍິງຂໍໃຫ້ນາຍຜູ້ຊາຍບອກຄວາມລັບຂໍ້ນຶ່ງໃຫ້ຟັງ ຄວາມລັບຂໍ້ນັ້ນ ຖ້າເພິ່ນບອກເວລາໃດເພິ່ນຕ້ອງຕາຍຕາມຄຳປະຕິຍານທີ່ມີໄວ້ ຂ້ອຍນີ້ຢ້ານວ່າ ເພິ່ນຊິວິດຄວາມອ້ອນວອນຂອງເມັຽບໍ່ໄດ້ — ໄກ່ເອີຍ! ຢ້ານນາຍຂອງເຮົາຕາຍແທ້ ເຮັດແນວໃດເພິ່ນຊິຂັດໃຈເມັຽໄດ້ ເພາະດຽວນີ້ນ້ຳຕາເມັຽຂອງເພິ່ນເຮັດໃຫ້ເພິ່ນອຸກອັ່ງໃຈເຕັມທີ່ຢູ່ແລ້ວ ບໍ່ເຫິງເພິ່ນຄົງຕົກລົງໃຈຍອມຕາຍເພື່ອເອົາໃຈເມັຽ ຝ່າຍເຈົ້າ ຫືຍ! ມາມົວແຕ່ປັ້ນປັ້ນມັງນິໃສ່ເມັຽຢູ່ ສ່ວນເຮົາເປັນທຸກນຳເພິ່ນເກືອບຕາຍ ເຈົ້າຊ່າງບໍ່ອາຍເພິ່ນແທ້."

ໄກ່ໄດ້ຟັງດັ່ງນັ້ນ ຈຶ່ງເວົ້າສຽດນາຍຂອງມັນວ່າ ນາຍຂອງເຮົາ ມີຄວາມຮັກແພງເມັຽສິນເປັນເຈົ້າຊູ້ແທ້ດອກ ເຖິງກັບຈະຍອມຕາຍຍ້ອນນ້ຳຕາ—ຂອງເມັຽ ເປັນໜ້າຍ້ອງຍໍສັນລະເສີນເພິ່ນອີຫລີດອກ ແຕ່ຂ້າພະເຈົ້າຍັງສົງໄສວ່າການເອົາໃຈເມັຽແບບນີ້ ຖ້າເພິ່ນມີເມັຽຄົນດຽວກໍພໍເຮັດໄດ້ ແຕ່ຖ້າເພິ່ນມີເມັຽຢ່າງໜ້ອຍ ໒ ຄົນແລ້ວ ເພິ່ນຈະເອົາຊີວິດຊີໃດມາຕາຍແທນ—ຄວາມເສົ້າໂສກເສັຽໃຈຂອງເມັຽໄດ້ເຖິງ ໒ ເທື່ອ ເວົ້າກັນຕາມຈິງແລ້ວ ເພິ່ນມີເມັຽຜູ້ດຽວທີ່ນີ້ ຍັງບອກຫລັ່ງສັ່ງສອນກັນບໍ່ໄດ້ ຝ່າຍຂ້າພະເຈົ້ານີ້ມີເມັຽເຖິງ ໕໐ ກໍຍັງລ້ຽງເກືອໃຫ້ຢູ່ໃນໂອວາດຄຳສອນໄດ້ ເມັຽຂອງຂ້າພະເຈົ້າຢ້ານຂ້າພະ—ເຈົ້າພິດ ຈະບອກສອນຢ່າງໃດຕ້ອງເຮັດນຳໃຈຂອງຂ້າພະເຈົ້າທຸກຢ່າງ ຖ້ານາຍຂອງເຮົາລ້ຽງເມັຽຂອງເພິ່ນເໝືອນຢ່າງຂ້າພະເຈົ້າລ້ຽງເມັຽຂອງຂ້າພະ

ເຈົ້າແລ້ວ ເພິ່ນຈະພົ້ນຈາກຄວາມຫຍຸ້ງຍາກໃຈໄດ້ຢ່າງງ່າຍດາຍ ໂດຍບໍ່ຕ້ອງມານັ່ງອຸກອັ່ງຢູ່ຢ່າງນີ້ເລີຍ.

ໝາຖາມວ່າ ຈະໃຫ້ນາຍເພິ່ນປະຕິບັດກັບເມັຽ ໄກ່ຕອບວ່າ "ກໍເອົາຄ້ອນອັນໃຫຍ່ໆຈັກໜ່ອຍຟາດເສັຽໃຫ້ສົມໃຈທີ່ນັ້ນ ຮັບຮອງວ່າເມັຽຂອງເພິ່ນຄົງຈະຮູ້ຈັກຜິດຈັກແມ່ນຂຶ້ນກວ່າເກົ່າເປັນແນ່ ທີ່ນັ້ນກໍບໍ່ຫານຸກກວນໃຫ້ເພິ່ນໄຂ-ຄວາມລັບອີກຕໍ່ໄປດອກ."

ຝ່າຍພໍ່ນາ ນັ່ງຟັງຢູ່ ໄດ້ສະຕິຂຶ້ນມາກໍລຸກຂຶ້ນໄປຢິບເອົາຄ້ອນໃຫຍ່-ຄ້ອນນຶ່ງ ຍ່າງເຂົ້າໄປຫາເມັຽ ທີ່ກຳລັງຮ້ອງໄຫ້ສະອື້ນຢູ່ໃນບ່ອນນອນ ພໍໃສ່ໄລຍັກຕູແລ້ວ ກໍວາງຍາແກ້ໃຫ້ດ້ວຍໄມ້ຄ້ອນອັນສັກສິດນັ້ນທັນທີ ຕີເອົາຈົນໝຳໃຈ ເມັຽທົນຄວາມເຈັບບໍ່ໄດ້ ກໍຮ້ອງຂໍຍອມຈົນສຽງຫລົງ.

ນີ້ແຫລະລູກເອີຍ! (ທ່ານມະຫາອຳມາດເວົ້າກັບນາງຕັນໄຕ) ເຈົ້າກໍຄວນຖືກພໍ່ຕີເສັຽເໝືອນດັ່ງເມັຽຊາວນານັ້ນແຫລະ ເຈົ້າຈຶ່ງຈະເຊົາເວົ້າໝົ້ນ.

ນາງຕັນໄຕ ຕອບວ່າ ເຖິງແມ່ນລູກດື້ດ້ານເຫັນດີໃນເຣື່ອງນີ້ຢູ່ ລູກກໍຈຳເປັນຂໍອະໄພນຳພໍ່ ຂໍພໍ່ຢ່າຖືສາໝາຍຈະທຳໂທດແກ່ລູກເລີຍ ນິທານເຣື່ອງ-ເມັຽຂອງພໍ່ນານີ້ ບໍ່ເຮັດໃຫ້ລູກເຊົາຄວາມຕັ້ງໃຈໄດ້ ຂໍພໍ່ຢ່າຂັດຂວາງຄວາມ-ປະສົງຂອງລູກ ເພາະເຖິງແມ່ນພໍ່ຂັດຂວາງ ບໍ່ຍອມພາລູກໄປຖວາຍແກ່ພຣະ-ເຈົ້າແຜ່ນດິນ ລູກກໍອາດໄປເອງໄດ້ ການທີ່ລູກປະສົງດັ່ງນີ້ ຂໍພໍ່ຢ່າໄດ້ຂັດໃຈ-ເລີຍ ໃນສຸດທ້າຍ ທ່ານມະຫາອຳມາດກໍຈົນປັນຍາ ຈຳໃຈເຂົ້າໄປເຝົ້າພຣະ-ເຈົ້າແຜ່ນດິນ ແລ້ວທູນວ່າ "ຂໍເດຊະ ໃນມື້ອື່ນນີ້ ນາງຕັນໄຕ ບຸດສາວຂອງ-ຂ້ານ້ອຍ ຈະມາຖວາຍຕົວເປັນບາທບໍຣິຈາຂອງພຣະອົງ" ພຣະຍາວິມະລະ ກໍປລາດພຣະໄທຖາມວ່າ ເຈົ້າຍອມເສັຽສະລະບຸດຕີຂອງເຈົ້າແທ້ຫລື? ມະຫາ-

ອຳມາດຫຼບວ່າ ເປັນຄວາມປະສົງຂອງບຸດຕີຂ້ານ້ອຍເອງ ໄພອັນໃຫຍ່ຫລວງ ທີ່ຈະເກີດແກ່ນາງໃນວັນຮຸ່ງຂຶ້ນນັ້ນ ນາງບໍ່ໄດ້ສະທ້ານເລີຍ ນາງອ້ອນວອນຂໍ ແຕ່ໃຫ້ໄດ້ມາເປັນບາດບໍຣິຈາສຂອງພຣະຄຸນເຈົ້າເໝືອຫົວ ແມ່ນພຽງຄືນດຽວ ກໍພໍໃຈ.

ພຣະຍາວິມະລະໄດ້ຟັງດັ່ງນັ້ນ ມີພຣະໄທສົງສານຢູ່ ຈຶ່ງຕັດເຕືອນສະຕິວ່າ ເຮົາໃຫ້ໂອກາດແກ່ທ່ານພິຈາຣະນາໃຫ້ຖີ່ຖ້ວນກ່ອນ ຖ້າເປັນຄວາມຕັ້ງໃຈຈິງແລ້ວ ເຮົາກໍບໍ່ປະຕິເສດ ແຕ່ທ່ານຢ່າລືມວ່າ ຄຳປະຕິຍານຂອງເຮົາຕ້ອງເປັນປະຕິຍານ ແລະທ່ານກໍຢ່າລືມວ່າ ທ່ານຕ້ອງເປັນຜູ້ປະຫານຊາຍາ(໑)ຂອງເຮົາໃນຮຸ່ງຂຶ້ນທຸກໆຄືນ ຖ້າທ່ານຂັດຄຳສັ່ງ ກໍຈະຕ້ອງຕັດຄໍທ່ານເອງ ຮູ້ໄວ້!

ມະຫາອຳມາດຫຼບວ່າ ຂ້າພຣະບາດຍິນດີໃນພຣະມະຫາກະຣຸນາເປັນອັນຍິ່ງ ທີ່ມີພຣະໄທສົງສານຂ້າພຣະບາດ ແລະ ບຸດສາວ ແຕ່ໄດ້ຍື່ນຕອງໝົດແລ້ວ ບໍ່ມີທາງທີ່ຈະແກ້ໄຂໄດ້ ເຖິງແມ່ນໃຈຂ້າພຣະບາດຈະສົງສານບຸດຕີເຫລືອທີ່ສຸດ ກໍຈະບໍ່ຂັດພຣະຣາຊບັນຊາເລີຍ ຂໍຖວາຍເປັນອາຈາສັດ.
ພຣະຍາວິມະລະຕັດວ່າ ເອີ້! ຖ້າດັ່ງນັ້ນ ຈະພາລູກສາວມາໃນວັນໃດກໍໄດ້ ເຮົາຈະຮັບເອົາເປັນຊາຍາໃນວັນນັ້ນ ແຕ່ພຽງຄືນດຽວ.

ມະຫາອຳມາດຫຼບພຣະເຈົ້າແຜ່ນດິນແລ້ວກັບເມືອເຮືອນ ເລົ່າໃຫ້ລູກສາວຟັງ ນາງໄດ້ຍິນກໍມີຄວາມເບີກບານໃຈ ກ່າວຂອບຄຸນບິດາເປັນອັນມາກ ແລະເອົ້າເລົ່າໂລມໃຈບິດາວ່າ ພໍ່ຢ່າໂສກເສົ້າເລີຍ ການທີ່ລູກໄດ້ເຂົ້າໄປເປັນບາດບໍຣິຈາ(໒)ຂອງພຣະເຈົ້າຢູ່ຫົວໃນຄາວນີ້ ຈະເຮັດໃຫ້ບິດາ

---

(໑)ເມັຽ (໒)ເມັຽ

ຫາຍຄວາມໂສກເສົ້າສລົດໃຈເປັນຢ່າງດີເລີດ ແລະພໍ່ຈະມີຄວາມສຸກກາຍ-ສະບາຍໃຈໄປຈົນຕລອດຊົ່ວອາຍຸຂອງພໍ່ ເມື່ອນາງກ່າວດັ່ງນັ້ນແລ້ວ ກໍຈັດແຈ່ງແຕ່ງເຄື່ອງຈະເຂົ້າໄປຖວາຍຕົວແກ່ພຣະເຈົ້າແຜ່ນດິນ ກ່ອນຈະອອກຈາກເຮືອນນາງໄດ້ຮຽກນ້ອງສາວມາສັ່ງວ່າ "ນ້ອງຮັກຂອງເອື້ອຍ ເວລານີ້ ເອື້ອຍຕ້ອງການຄວາມຊ່ອຍເຫລືອນໍານ້ອງຫລາຍ ນ້ອງຈົ່ງຕັ້ງໃຈຊ່ອຍເອື້ອຍແທ້ໆ ຢ່າມີຄວາມຢ້ານກົວແນວໃດ ຄື ເມື່ອພໍ່ພາເອື້ອຍເຂົ້າໄປຖວາຍພຣະເຈົ້າແຜ່ນດິນ-ແລ້ວ ເອື້ອຍຈະກາບທູນເພິ່ນ ຂໍຮັບເອົານ້ອງເຂົ້າໄປນອນຄ້າງຄືນນໍາ ໃນບ່ອນຣາຊສິງຫາສນ໌ທີ່ທໍາການອາວາຫະ ໃນເວລາຂ້ອນຄືນໄປແລ້ວໃຫ້ນ້ອງຄານເຂົ້າໄປປຸກເອື້ອຍ ເມື່ອປຸກເອື້ອຍຂຶ້ນແລ້ວ ໃຫ້ນ້ອງເວົ້ານໍາເອື້ອຍວ່າ ເອື້ອຍເອີຍ! ຖ້າເອື້ອຍຕື່ນຢູ່ກໍຈົ່ງອີ່ດູເວົ້ານິທານໃຫ້ນ້ອງຟັງນ່ອນໆແດ່ ແລ້ວເອື້ອຍກໍຈະເວົ້ານິທານໃຫ້ນ້ອງຟັງ ຖ້ານ້ອງປະຕິບັດຕາມຄໍາແນະນໍາຂອງເອື້ອຍໄດ້ ເຮົາທັງສອງຈະໄດ້ປັດເປົ່າຄວາມໂສກເສົ້າເສັ້ງໃຈຂອງບິດາ ແລະອານາປະຊາຣາສ-ດອນທັງຫລາຍໄປໄດ້." ນາງອິໄລວັນ ກໍຮັບເອື້ອຍວ່າ ຈະປະຕິບັດນໍາໄດ້ທຸກປະການ.

ຄັນເຖິງເວລາ ມະຫາອໍາມາດກໍພານາງຕັນໄຕໄປຖວາຍພຣະເຈົ້າ-ແຜ່ນດິນໃນຫ້ອງບັນທົມ ແລ້ວກໍທູນລາກັບຄືນ ພຣະເຈົ້າແຜ່ນດິນໄດ້ທອດພຣະ-ເນດເຫັນນາງຕັນໄຕມີສິຣິລັກສະນະອັນງາມເລີດ ກໍມີພຣະໄທສເນຫາ ແຕ່ພໍເຫລືອບເຫັນນາງຮ້ອງໄຫ້ຟູມຟາຍນໍ້າຕາໄຫລອາບແກ້ມຢູ່ ຈຶ່ງຕັດຖາມ.

ນາງຕັນໄຕ ທູນວ່າ ຂ້ານ້ອຍມີນ້ອງສາວຢູ່ຄົນນຶ່ງ ມີຄວາມຮັກແພງກັນທີ່ສຸດ ແລະນາງກໍອາໄລນໍາຂ້ານ້ອຍຫລາຍ ຂ້ານ້ອຍຄິດເຖິງນ້ອງສາວ ເປັນອັນສຸດວິໄສຈຶ່ງໄດ້ຮ້ອງໄຫ້ ສະນັ້ນ ຂໍພຣະອົງໄດ້ທົງອະນຸຍາດໃຫ້ນາງໄດ້ເຂົ້າມາ-

ນອນຄ້າງນຳຂ້ານ້ອຍໃນຄືນນີ້ດ້ວຍ ເພື່ອຈະໄດ້ສັ່ງລາກັນເປັນຄັ້ງສຸດທ້າຍ.

ພຣະຍາວິມະລະ ທົງອະນຸຍາດຕາມທີ່ນາງຂໍ ຈຶ່ງໃຫ້ນະຫາດເລັກ-ໄປພານາງວິໄລວັນມາໃນຄ່ຳວັນນັ້ນ ເຖິງເວລາກາງຄືນພຣະຍາກໍສະເດັດ-ຂຶ້ນແທ່ນບັນທົມຮ່ວມກັບນາງຕັນໄຕ ແລະອະນຸຍາດໃຫ້ນາງວິໄລວັນນອນແທບໃຕ້ຂ້າງແທ່ນນອນ.

ເຖິງເວລາເດິກປະມານໄກ່ຂັນກົກ ນາງວິໄລວັນກໍປຸກພີ່ສາວວ່າ ເອື້ອຍເອີຍ! ຖ້າເອື້ອຍຕື່ນຢູ່ຈົ່ງອີ່ດູນ້ອງ ເວົ້ານິທານມ່ວນໆໃຫ້ນ້ອງຟັງຈັກ-ເລື່ອງແດ່ ກ່ອນແຕ່ບໍ່ທັນແຈ້ງ ເພາະຄາວນີ້ເປັນຄາວສຸດທ້າຍແລ້ວທີ່ນ້ອງຈະໄດ້ຟັງນິທານມ່ວນໆຂອງເອື້ອຍ.

ນາງຕັນໄຕບໍ່ຕອບວ່າຢ່າງໃດ ລຸກຂຶ້ນກາບທູນພຣະເຈົ້າຯຜ່ນດິນວ່າ ຂ້າແຕ່ພຣະອົງ ພຣະອົງຈະຊົງໂຜດໃຫ້ຂ້ານ້ອຍເວົ້າຕາມຄວາມຂໍ ຂອງນ້ອງສາວໄດ້ຫລືບໍ່? ພຣະຍາວິມະລະ ຕັດວ່າ ເຮົາພຣະອົງກໍມັກນິທານມ່ວນໆຢູ່ຄືກັນ ຖ້ານິທານທີ່ເຈົ້າຈະເວົ້ານີ້ມ່ວນອີ່ຫລີແລ້ວ ກໍຢາກຈະຟັງ ຈົ່ງເວົ້າເຖີ້ນ

ນາງຕັນໄຕມີຄວາມຍິນດີເປັນອັນມາກໃນອຸບາຍທີ່ຕົນຄິດໄວ້ຈະເປັນຜົນ ສຳເຣັດຕາມຄວາມມາດໝາຍ ແລ້ວນາງກໍຕັ້ງຕົ້ນເວົ້ານິທານ ເລື່ອງງົວນັນທະອຸສຸພະຣາດ ກັບຣາຊສີ ເປັນສ່ຽວກັນ ດັ່ງຕໍ່ໄປນີ້:-

ແຕ່ປາງກ່ອນ ມີເສດຖີຄົນນຶ່ງ ຊື່ ທັມມະປາລະ ຢູ່ໃນນະຄອນປຸດຕິຍະ ແຫ່ງປະເທດທັກສິນາບົດ ທ່ານເສດຖີເປັນຄົນຮັ່ງມີ ອຸດົມສົມບູນດ້ວຍຊັບສິ່ງຄານເກືອບທຸກຢ່າງ ແຕ່ປານນັ້ນກໍຍັງບໍ່ອີ່ມພໍໃນການຄ້າຂາຍ ທ່ານມັກເດີນທາງໄປຄ້າຂາຍໃນເມືອງໄກໆສເມີ ດ້ວຍພາຫະນະກວຽນເປັນຈຳນວນມາກ ແລ້ວຊື້ສິນຄ້າຈາກເມືອງນັ້ນ ກັບຄືນມາຂາຍໃນເມືອງຂອງຕົນ ໃນບັນດາງົວກວຽນທັງຫລາຍຂອງເສດຖີນັ້ນ ມີງົວຕົວນຶ່ງ ຊື່ນັນທະກະ ເປັນງົວ

ມຸນ ໄດ້ຊ່ອຍເຫລືອທ່ານເສດຖີໃນກິຈການຄ້າມາຈົນແກ່.

ຄັນທ່ານເສດຖີຈັດຊື້ສິນຄ້າໄດ້ຫລາຍແລ້ວ ກໍບັນທຸກໃສ່ກວຽນໄປຂາຍທີ່ປະເທດກັສມີຣະ ແລະໄດ້ເອົາງົວບັນທະກະໃສ່ກວຽນໄປນຳ ເມື່ອຈາກເມືອງໄປໄດ້ຫລາຍມື້ເຖິງປ່າໃຫຍ່ແຫ່ງນຶ່ງ ເປັນທີ່ກັນດານຫ່າງຈາກບ້ານຜູ້ເມືອງຄົນ ງົວບັນທະກະເຫັນປ່ານັ້ນເປັນໜ້າຊື່ນຊົມ ອຸດົມໄປດ້ວຍຫຍ້າແລະປ່າໄມ້ນາໆຊນິດ ມີຫ້ວຍນ້ຳໄຫລມາຈາກພູໃສສະອາດ ແລະປັກສີຊາດທັງຫລາຍກໍຮ້ອງຂານຂັບຢູ່-ຊື່ອແຊວທົ່ວໄປ ບັນທະກະໄດ້ຮັບຄວາມລຳບາກຢາກນ້ຳແລະຫຍ້າເປັນກຳລັງຈຶ່ງຄຶດຮຳເພິງໃນໃຈວ່າ ອັນເສດຖີຊື່ທັມມະປາລະ ນາຍເຮົາຄົນນີ້ ມີຊື່ວ່າທັມມະ-ປາລະລ້າໆ ແຕ່ຈິດໃຈຂອງມັນບໍ່ມີທັມເລີຍ ເບິ່ງດູ! ຕົວກູໄດ້ຊ່ອຍພາຣະມັນມາແຕ່ຍັງໜຸ່ມ ຈົນມັນຕັ້ງຕົວໄດ້ເຖິງຂັ້ນນະຕາເສດຖີແລ້ວ ມັນກໍຍັງບໍ່ເຊົາໃຊ້ງານກູ ແລະບໍ່ຮູ້ຈັກຄຸນກູດ້ວຍ ທຸກໆປີກູຕ້ອງໃຊ້ຄໍດັນແອກຂົນສິນຄ້າໃຫ້ມັນຈົນຄໍໂປກ ທັງໃນທາງກັນດານຢ່າງນີ້ ມັນກໍບໍ່ປົດປ່ອຍໃຫ້ກູພັກແຮງກິນນ້ຳກິນຫຍ້າເສັຽເລີຍ ບັດນີ້ກູກໍແກ່ເຖົ້າແລ້ວ ຈະເອົາເຫື່ອແຮງຊິໃດມາດັນແອກໃຫ້ມັນຜູ້ອະກະຕັນຍູໃຈໂຫດຮ້າຍນີ້ໄຫວ ຄຶດຮຳເພິງດັ່ງນີ້ແລ້ວ ບັນທະກະກໍທຳອຸບາຍພິຕິລົ້ມເຈັບລົງ ພວກຄົນຂັບກວຽນເຫັນດັ່ງນັ້ນ ຈຶ່ງແລ່ນໄປບອກເສດຖີທັມມະປາລະໆລົງຈາກ-ກວຽນເຫລັ້ມໜ້າກັບຄືນມາເບິ່ງ ເຫັນອາການງົວບັນທະກະເປັນໜັກ ທັງເສດຖີກໍຟ້າວໄປໃຫ້ພົ້ນຈາກດົງໃຫຍ່ກ່ອນຕາເວັນຕົກດິນ ຈຶ່ງສັ່ງໃຫ້ເອົາງົວຕົວອື່ນ ມາທຽມກວຽນເຫລັ້ມນັ້ນແທນ ແລ້ວບອກລູກແຫລ້ງໃຫ້ເຝົ້າເບິ່ງອາການຂອງງົວບັນທະກະຢູ່ ພ້ອມກັບສັ່ງວ່າ ຖ້າຕາຍກໍໃຫ້ຈັດການເຜົາເສັຽ ກະບວນກວຽນຂອງ-ທັມມະປາລະກໍຟ້າວເດີນທາງຕໍ່ໄປ.

ເມື່ອກະບວນກວຽນລັບຕາໄປແລ້ວ ລູກແຫລ້ງເສດຖີ ໔ ຄົນທີ່ຢູ່ເຝົ້າ-

ງົວນັ້ນ ປຶກສາກັນວ່າ ທີ່ນີ້ເປັນປ່າຮົກດົງໜາ ເພັນພິດປ່າກໍມີມາກ ເຮົາຈະຢູ່ຈັ່ງໃດໄດ້ ມາພວກເຮົາຈັດການຫາຟືນມາເຜົາມັນເສັຽ ແລ້ວພ້າວອອກໄປຈາກປ່າໃຫ້ພົ້ນແຕ່ເວລາຕາເວັນຍັງບໍ່ທັນຕົກນີ້ເທາະ ຕົກລົງກັນແລ້ວແຫລັງເສດຖີກໍພ້າວແຍກຍ້າຍກັນໄປຫາຟືນ ນັນທະກະໄດ້ໂອກາດດັ່ງນັ້ນ ກໍລຸກຂຶ້ນແລ່ນໜີເຂົ້າປ່າ ໄກຈາກທີ່ຕົນພົດລົ້ມນັ້ນເປັນອັນມາກ; ນັນທະກະອາໄສຢູ່ໃນປ່ານັ້ນຕລອດມາຫລາຍເດືອນ ໄດ້ກິນຫຍ້ານ້ຳອີ່ມໜຳສຳຣານ – ແລະ ບໍ່ຖືກໃຊ້ງານໜັກກໍອ້ວນພີ ມີກຳລັງແຂງແຮງຫ້າວຫານຂຶ້ນ ຈຶ່ງສົ່ງສຽງຮ້ອງກ້ອງໄປທົ່ວທັງປ່າ.

ໃນປ່ານັ້ນ ມີຣາຊສີຕົວນຶ່ງ ຊື່ຈັນທະປິງຄະລະ ເປັນພຣະຍາແກ່–ເນື້ອທັງຫລາຍ ພຣະຍາຣາຊສີຈັນທະປິງຄະລະ ມີໝາສອງຕົວເປັນມຸນຕີ ຕົວນຶ່ງຊື່ ອະນຸພາຄຍະ ຕົວນຶ່ງຊື່ ທະມະນະ ມື້ນຶ່ງ ພຣະຍາປິງຄະລະຢາກນ້ຳ ຈຶ່ງອອກຈາກຖ້ຳໄປ ພໍເຖິງຫ້ວຍນ້ຳ ໄດ້ຍິນສຽງຮ້ອງກ້ອງສນັ່ນ ຂອງງົວນັນທະກະປະດຸຈດັ່ງປ່ານັ້ນຈະທະລາຍໄປ ກໍຕົກໃຈກົວລືມຢາກນ້ຳ ແລ່ນກັບຄືນມາຖ້ຳຂອງຕົນ ຢືນສັ່ນຢູ່ກັບບ່ອນ ແລ້ວງວາກໄປມາ ເພື່ອຢາກຮູ້ວ່າແມ່ນອີ່ຫຍັງແທ້ ໝາສອງຕົວທີ່ເປັນມຸນຕີຂອງຣາຊສີ ເຫັນອາການຂອງນາຍດັ່ງນັ້ນ ໝາຕົວທີ່ຊື່ວ່າ ອະນຸພາຄຍະ ຈຶ່ງເວົ້າຄ່ອຍໆກັບໝາຊື່ ທະມະນະວ່າ "ທະມະນະ! ມີເຣື່ອງຫຍັງນໍ! ນາຍຂອງເຮົາຢາກນ້ຳ ຍັງບໍ່ທັນໄດ້ກິນ ກໍແລ່ນຕາເຫລືອກກັບມາ."

ທະມະນະ ຕອບແວໄປທາງນຶ່ງວ່າ "ທ່ານອະນຸພາຄຍະເອີຍ! ໜ້າທີ່ຂອງເຮົາໃນເວລານີ້ ບໍ່ສູ້ເໝາະສາແລ້ວ ເຮົາຄວນຫລົບຫລີກໄປເສັຽດີກວ່າຖ້າຄອຍຮັບໃຊ້ ເພາະວ່າ ເຖິງແມ່ນເຮົາຈະເຮັດດີປານໃດ ກໍບໍ່ໄດ້

ຮັບຮາງວັນຄວາມຊອບຈັກໜ່ອຍ ເພິ່ນມັກເສີຍເສັງ ບໍ່ຫລຽວແລເຮົາເລີຍ! ຂ້າພະເຈົ້າເຫັນວ່າ ((ຄົນຜູ້ທີ່ຄອຍອາໄສແຕ່ໃຫ້ນາຍໃຊ້ ຍ່ອມໄດ້ຮັບຄວາມລຳບາກຕາກແດດທົນຝົນ ຄົນຜູ້ທີ່ປະພຶດບໍ່ກ່ຽວຂ້ອງກັບໃຜ ມີແຕ່ເພິ່ງໂຕເອງນັ້ນ ມີຕົນແກ່ຊີວິດຫລາຍ ຄົນທີ່ເພິ່ງແຕ່ຜູ້ອື່ນຈຶ່ງຜູ້ເປັນຄົນໄດ້ນັ້ນ ຄືກັນກັບຄົນຕາຍ. ຄຳສັ່ງທີ່ບັງຄັບວ່າ ນາໜີ້, ນັ່ງລົງ, ລຸກຂຶ້ນ, ເວົ້າ, ນິດ ເຫລົ່ານີ້ເປັນຄຳຂອງຄົນມີເງິນເວົ້າກັບ ຜູ້ຊາດາຕົກທີ່ແບກໜ້າເຂົ້າໄປເພິ່ງເຂົາໂດຍຢາກໄດ້ຊັບ. ຄົນໂງ່ທີ່ມົວແຕ່ແຕ່ງໂຕແລ້ວແຕ່ງໂຕອີກ ສຳຫລັບໃຫ້ນາຍໃຊ້ເພື່ອຮາຍໄດ້ຂອງນາຍ ກໍຄືກັນກັບແມ່ເລງທີ່ແຕ່ງໂຕເພື່ອຊາຍອື່ນ. ບ່າວທີ່ນອບນ້ອມເພື່ອໃຫ້ນາຍມີທ່າຂຶງຂັງ, ສະລະຊີວິດຂອງຕົນເພື່ອໃຫ້ນາຍບໍ່ຕາຍອົດທົນລຳບາກເພື່ອໃຫ້ນາຍມີຄວາມສຸກສຳຣານ; ຈະມີຜູ້ໃດໂງ່ກວ່າບ່າວ-ແບບນີ້ອີກບໍ່? ອົດສາມີດ ບໍ່ປາກ ຫາວ່າໂງ່, ເວົ້ານຳຫລາຍ ຫາວ່າ ຖແລງແປງຄວາມ, ຍອມອ່ອນຫລາຍ ຫາວ່າຂີ້ຢ້ານ, ພ້າວຟັ່ງນຳຫາວ່າບໍ່ສຸພາບ, ຄອຍຮັບໃຊ້ຢູ່ໃກ້ ຫາວ່າລຶ້ງລວນ, ຢູ່ໄກຈັກໜ່ອຍ ຫາວ່າຫລົບລີ້ຮອງໃຊ້ບໍ່ທັນໃຈ; ໜ້າວຽກຂອງບ່າວເຫລືອເຕັມທີ ເຖິງໃຫ້ມີຄວາມສາມາດປານພຣະໂຍຄີ(໑) ກໍບໍ່ປະຕິບັດໃຫ້ເຖິງໃຈນາຍໄດ້ຄົບຖ້ວນ))".

ອະນຸພາຄຍະ ກ່າວຄັດຄ້ານວ່າ "ເພື່ອນເອີຍ! ຂໍ້ທີ່ຜູ່ເວົ້າມານີ້ - ພຽງແຕ່ຄິດໃນໃຈກໍບໍ່ສົມຕອບທຸກປະການ, ເປັນຫຍັງ? ຄົນເຮົາຈຶ່ງບໍ່ພັກດີຕໍ່ເຈົ້ານາຍຜູ້ໃຫຍ່ ເພາະວ່າ ເມື່ອເພິ່ນຮັກຫຸນແລ້ວ ກໍໄດ້ສົມຄວາມປະສົງທຸກ

---

(໑)ພຣະໂຍຄີ ແມ່ນພຣະອີສວນເຈົ້າແຫ່ງຜີ ຫລືພຣະເຈົ້າແຫ່ງສາສນາພາມ

ຢ່າງ ໂດຍບໍ່ນານເລີຍ."

ທະມະນະຕອບວ່າ "ເຖິງຈັ່ງຊັ້ນກໍຕາມ ເຮົາຍັງເຫັນວ່າ ເສັຽເວລາລ້າ ໃນການທີ່ເຮົາເຂົ້າຍຸ່ງກັບຄົນອື່ນ, ການສເນີເຂົ້າໄປຮັບໜ້າທີ່ໃນວຽກການຂອງຄົນອື່ນ ອັນບໍ່ແມ່ນວຽກຂອງຕົນ ມີແຕ່ຄວາມເສັຽຫາຍເປັນພື້ນ". ອະນຸພາຄຍະ ເວົ້າຢູ່ຄວາມເກົ່າວ່າ "ເຖິງຢ່າງນັ້ນກໍຕາມ ໜ້າທີ່ບ່າວຄວນເບິ່ງແຍງເອົາໃຈໃສ່ ໃນວຽກການຂອງນາຍສເມີ" ທະມະນະ ຖຽງວ່າ "ໃຜເປັນປະທານມຸນຕີ ມີໜ້າທີ່ໃຫ້ສຳເຣັດກິຈການທັງ-ປວງ ໃຫ້ເຂົາເຮັດໄປກໍແລ້ວກັນ, ໝູ່ຂ້ອຍບໍ່ຄວນຍື່ນມືເຂົ້າໄປສອດໃນໜ້າວຽກຂອງເຂົາ ຂໍໃຫ້ເບິ່ງຕົວຢ່າງໝູ່ທີ່ພະຍາຍາມເຂົ້າໄປກ່ຽວຂ້ອງ ໃນໜ້າທີ່ວຽກການຂອງນາຍ ເພື່ອຢາກໃຫ້ເຂົາໄດ້ດີ ຕ້ອງໄດ້ຮັບຄວາມເດືອດ-ຮ້ອນເໝືອນລໍຄຶກຕີ." ເຣື່ອງເປັນຈັ່ງໃດ? ອະນຸພາຄຍະຖາມ.

ທະມະນະ ຈາຣະໄນ:-

ນິທານແອັນທີ ໑

ເຣື່ອງ ໝາ ກັບ ລໍ

ຊ່າງຊັກເສື້ອຄົນນຶ່ງ ຊື່ ກັບປູຣະປັດ ຢູ່ໃນເມືອງພາຣານະສີ ວັນນຶ່ງ ຢອກເມັຽສາວຫລິ້ນຢູ່ເຫິງເດິບ ແລ້ວກໍພາກັນເຂົ້ານອນຫລັບຈົນ-ແຈບ ເດິກຈັກໜ່ອຍມີກະໂມຍຄ່ອຍຢອງເຂົ້າມາຈະລັກຂອງ ຢູ່ເດີ່ນນັ້ນມີລໍຕົວນຶ່ງ ທີ່ເຈົ້າຂອງຜູກໄວ້ກັບຫລັກ ແລະ ໝາອີກຕົວນຶ່ງນອນຢູ່ນຳກັນ, ລໍເຫັນກະໂມຍເຂົ້າມາຈຶ່ງເວົ້າກັບໝາວ່າ "ເອີຍ! ນີ້ແມ່ນໜ້າທີ່ຂອງເຈົ້າ! ເຫດໃດເຈົ້າຈັ່ງບໍ່ເຫົ່າ ເພື່ອໃຫ້ນາຍຕື່ນ" ໝາຕອບວ່າ "ເຈົ້າບໍ່ຕ້ອງ-ສອດເຂົ້າມາຫຍຸ້ງໃນເຣື່ອງຂອງຂ້ອຍ; ເຈົ້າຮູ້ບໍ່ວ່າ ຂ້ອຍເຝົ້າເຮືອນໃຫ້ພໍນີ້ຢ່າງໃດ ເຂົາມີຄວາມສະບາຍມາເຫິງ ເລີຍບໍ່ຮູ້ຈັກຄຸນຂອງຂ້ອຍ,

ທຸກວັນນີ້ ພຽງແຕ່ຈະໃຫ້ອາຫານກິນກໍມັກເສີຍໆລືມໆ ທັມມະດານາຍ ຖ້າຍັງບໍ່ປະສົບເຫດການທີ່ພາໃຫ້ຕົກໃຈ ກໍມັກລືມພວກລູກນ້ອງ".

ລີເອີ້ວ "ຟັງແດ່ບັກຮ່າ! ຜູ້ທີ່ຮ້ອງຂໍຮາງວັນໃນຂນະທີ່ຕົນເຮັດວຽກຕາມໜ້າທີ່ ຈະຮຽກວ່າ ເປັນບ່າວເຂົາໄດ້ຢ່າງໃດ? ຈະວ່າເປັນມິດສະຫາຍແບບໃດ?"

ພາຖານຄືນ: "ຜູ້ທີ່ບໍ່ໃຫ້ຮາງວັນແກ່ບ່າວ ໃນຂນະທີ່ເຂົາເຮັດວຽກຕາມໜ້າທີ່ ຈະຮຽກວ່າເປັນນາຍແບບໃດ ເພາະວ່າໃນການລ້ຽງເກືອຜູ້ນ້ອຍທີ່ມາອາໄສຢູ່ນຳ ໑ ໃນການຕອບແທນຄຸນນາຍ ໑ ໃນການປະຕິບັດທັມ ໑ ແລະໃນການອອກລູກ ໑ ສີ່ປະການນີ້ ຈະຢືມມືຂອງຄົນອື່ນເຮັດບໍ່ໄດ້".

ລີຄຽດ "ເອີ້ຍ! ບັກຊື່ ປະປ່ອຍໜ້າທີ່ຂອງຕົນເສັຽແລ້ວ ຊ່າງຫົວມັນເທາະ ກູຈະເຮັດໃຫ້ນາຍຕື່ນຈົນໄດ້ ເພາະເພິ່ນວ່າ ຄວນບູຊາຕາເວັນ–ທາງເບື້ອງຫລັງ, ບູຊາພຣະເພີງດ້ວຍເບື້ອງທ້ອງ, ບູຊານາຍທັງກາຍແລະໃຈ, ປະຕິບັດທັມເພື່ອຊາດໜ້າ ດ້ວຍຄວາມບໍ່ມີມາຍາ" ວ່າແລ້ວ ຄືກໍຮ້ອງຂຶ້ນຈົນສຸດສຽງດັງກ້ອງບ້ານ; ເວລານັ້ນ ຊ່າງຊັກເສື້ອກຳລັງນອນຫລັບແຈບໄດ້ຍິນສຽງລີກໍສະດຸ້ງຕື່ນ ມີຄວາມຄຽດໃຫ້ລີບໍ່ມີທ່ຽງທີ່ ຄວ້າໄດ້ຄ້ອນຕະໂປ້ງຂນາດໃຫຍ່ ແລ້ວກໍລົງໄປຕີລີສຸດແລ້ວແຕ່ຈະຖືກບ່ອນໃດ ພາດເອົາເສັ້ງຈົນຂີ້ແຕກ.

ເພາະສະນັ້ນ ຂ້າພະເຈົ້າຈຶ່ງວ່າ ບໍ່ຄວນເຂົ້າໄປກ່ຽວຂ້ອງໃນວຽກການຂອງຄົນອື່ນອັນບໍ່ແມ່ນໜ້າທີ່ຂອງຕົນ, ການຕິດຕາມຮາຊສີນາຍຂອງເຮົາເພື່ອຈັບສັດມາເປັນອາຫານ ເປັນໜ້າທີ່ຂອງເຮົາພໍແລ້ວ ແລະອາຫານທີ່ຈັດ–ໄດ້ວານນີ້ເຫລືອຢູ່ເປັນກີ ກິນແດ່ທີ່ເຫລືອນັ້ນໄປກ່ອນກໍໄດ້.

ອະນຸພາຄຍະ ເຄືອງ: "ນີ້ແມ່ນເພື່ອນທຳການຕອບແທນຄຸນນາຍ ມີຫວັງແຕ່ກິນທີ່ນັ້ນບໍ້! ເວົ້າງ່າຍໆຈັ່ງຊີ້ບໍ່ສົມຄວນເປັນບ່າວເລີຍ."

ທະມະນະ ຖາມ: "ຊັ້ນຊິເຮັດແນວໃດ?"

ອະນຸພາຄຍະ ຕອບ: "ຮວ້າຍ! ດຽວນີ້ນາຍເຮົາຢາກນ້ຳ ໄປ ເຖິງຝັ່ງຫ້ວຍແລ້ວ ຍັງບໍ່ທັນໄດ້ກິນ ຕົກໃຈແນວໃດບໍ່ຮູ້ພ້າວແລ່ນມາ."

ທະມະນະ: "ເອ! ຈັ່ງໃດໂຕຈັ່ງຮູ້?"

ອະນຸພາຄຍະ: "ອັນໃດແດ່ທີ່ຜູ້ເປັນບັນດິດຈະບໍ່ຮູ້, ສຸພາສິດເພີ່ນວ່າ ຖ້ອຍຄຳທີ່ເວົ້າອອກມາ ແມ່ນປະສຸສັດ(໑)ຍັງພາຍຮູ້ໄດ້: ຄື ຊ້າງ ມ້າ ທີ່ ແອບເຝິກແລ້ວ ເມື່ອບອກກໍເຄື່ອນຍ້າຍໄປຕາມ; ອັນຄົນຜູ່ເປັນບັນດິດຍ່ອມ ຮູ້ທັນຄົນ ເຖິງແມ່ນເຂົາບໍ່ທັນແຍ້ມອອກກໍຕາມ, ປັນຍາອັນສ່ຽມແຫລມເປັນ ທາງໃຫ້ຫຍັ່ງຮູ້ເຖິງໃນໃຈ ຈາກອາການອັນເພັງຕິງຂອງຄົນອື່ນ."

ກິຣິຍາພາຍນອກ, ການຍິວຣະຍາດ, ການເພັງຕິງ, ການເວົ້າປີ ປາຍ, ການເສືອດຕາ, ຫລື ບຸ້ຍລົບ ເຫລົ່ານີ້ເປັນທາງໃຫ້ສ່ອງຮູ້ເຖິງໃຈ ເພາະສະນັ້ນ ເວລານີ້ ເປັນເວລາທີ່ນາຍຕົກໃຈ ຈຶ່ງເປັນໂອກາດທີ່ຄວນ ເຮັດໃຫ້ນາຍພາຍໂພດໄດ້ຢ່າງໃຫຍ່ ເພີ່ນຊັ່ງວ່າ:-

"ສົນທະນາໃຫ້ຖືກກັບເວລາ, ປານີໃຫ້ຕ້ອງກັບໃຈມັກ, ຮ້າຍໃຫ້ ສົມກັບອຳນາດຂອງຕົນ; ຜູ່ໃດຮູ້ຈັກເຮັດດັ່ງນີ້ ຜູ່ນັ້ນເປັນນັກປາດ."

ທະມະນະ ຖາມ: "ສ່ຽວເອີຍ! ໂຕຍັງບໍ່ເຂົ້າໃຈໜ້າທີ່ປະຕິບັດ- ການ"ຈຶ່ງສັງເກດດັ່ງນີ້:-

ຜູ່ໃດ ນາຍບໍ່ໄດ້ຮຽກ ແບ້ແຕ້ສເບີໜ້າເຂົ້າໄປຫາ, ນາຍຍັງບໍ່ທັນ ຖາມ ເວົ້າລວນລານຖແລງຈົນຟັງບໍ່ທັນ, ຍົກຍໍຕົວເອງວ່າເປັນຄົນຮັກແພງ

---

(໑)ປະສຸສັດ ແມ່ນສັດລ້ຽງ ດັ່ງ ຊ້າງ ມ້າ ງົວ ຄວາຍ ເປັນຕົ້ນ.

ຂອງນາຍ ເຮົາວ່າ ຜູ່ນັ້ນ ປັນຍາປູ້."

ອະນຸພາຄຍະ ຕອບ: "ສ່ຽວເອີຍ! ເຮົາຈະບໍ່ຮູ້ໜ້າທີ່ອັນຄວນປະຕິບັດນາຍຢ່າງໃດ ຈຶ່ງສັງເກດເບິ່ງ:-

ສິ່ງໃດແດ່ ທີ່ທັມມະຊາດຂອງມັນເອງ ຈະບອກວ່າງາມ ຫລື ບໍ່ງາມ ສິ່ງໃດຖືກໃຈຂອງຜູ່ໃດ ສິ່ງນັ້ນກໍເປັນຂອງງາມສຳຫລັບຜູ່ນັ້ນ;

ຜູ່ມີປັນຍາຕ້ອງຮຽນຮູ້ຈິດໃຈຂອງຄົນ ທີ່ສະແດງອອກມາດ້ວຍອາການພາຍນອກ ແລ້ວປະຕິບັດໃຫ້ຖືກໃຈໄດ້ທຸກທ່າ;

ເມື່ອໄດ້ຍິນສຽງຖາມວ່າ ໃຜຫັ້ນ? ຄວນຂານຕອບວ່າ ຂ້າພະເຈົ້າ ແລ້ວບອກຕໍ່ໄປວ່າ ຕ້ອງການຫຍັງ ເຊີນບອກມາທັງໝົດ; ໜ້າທີ່ຜູ່ຮັບໃຊ້ ຕ້ອງປະຕິບັດຕາມຄຳສັ່ງຂອງນາຍຈົນສຸດສາມາດ;

ຜູ່ສັນໂດດ ມີໃຈໜັກ, ມີປັນຍາ ທັນຕາມຄຳສັ່ງໂດຍບໍ່ຊັກຊ້າ, ຄົນລັກສະນະນີ້ ຈຶ່ງຢູ່ໃນຣາຊສຳນັກ(໑)ໄດ້."

ທະມະນະ ຖາມ: "ຕີຕາງວ່າ ນາຍບໍ່ພໍໃຈ ໃນການທີ່ຜູ່ແນ້ແຕ້ເຂົ້າໄປຫາ ໃນເວລາບໍ່ຄວນ ຈະວ່າຢ່າງໃດ?"

ອະນຸພາຄຍະ ຕອບ: "ກໍອາດເປັນໄດ້ ແຕ່ເຖິງຈັ່ງຊັ້ນ ບ່າວຄວນຢູ່ຮັບໃຊ້ນາຍໂດຍແທ້ ເພາະວ່າ ການບໍ່ກ້າເຮັດຫຍັງ ຍ້ອນຢ້ານຜິດ ອັນນີ້ເປັນລັກສະນະຂອງຄົນໂງ່; ເຈົ້ານາຍຜູ້ໃຫຍ່ ມັກຫາຍໂຜດພໍໃຈແກ່ຄົນຢູ່ໃກ້ ເຖິງແມ່ນຈະບໍ່ມີຄວາມຮູ້, ສະກຸນຕ່ຳ, ແລະກິຣິຍາຫຍາບ ກໍຕາມ ດັ່ງດຽວກັນກັບສັດຕີ ແລະ ເຄືອເຂົາ ມັກກ້ຽວພັນກັບຂອງທີ່ຢູ່ໃກ້ສເມີ."

---

(໑) ຣາຊສຳນັກ ແມ່ນວັງພຣະເຈົ້າແຜ່ນດິນ.

ທະມະນະ ຖາມ: "ຈັ່ງຊັ້ນ ໂດຈະເຂົ້າໄປຫານາຍ ຈະເວົ້າວ່າຢ່າງໃດ?"

ອະນຸພາຄຍະ ຕອບ: "ອ້າວ! ຕ້ອງເບິ່ງທ່າທາງກ່ອນແໜ! ວ່າເພິ່ນກະຣຸນາ ຫລືບໍ່?" ທຳຢ່າງໃດຈຶ່ງຈະຮູ້ຈັກອາການຂອງນາຍໄດ້? ທະມະນະ ຖາມ.

ອະນຸພາຄຍະ ຕອບ: "ເຫລືອດລາຍດານາຮັບແຕ່ໄກ, ຍູ້ມຫົວພໍຄວນ, ເວົ້າຄວາມເກົ່າທີ່ເຄີຍສນິດຮັກແພງຂຶ້ນມາ, ຮັກແພງໃນຜູ້ທີ່ບໍ່ໄດ້ຮັບໃຊ້, ເອື້ອເຟື້ອກວ້າງຂວາງ ແມ່ນທຳຜິດ ກໍ່ຕື່ນຄສານຮັກໃຫ້ຄິດເຫັນຄວາມດີແຕ່ກ່ອນ ເຫລົ່ານີ້ ເປັນລັກສະນະຂອງນາຍຜູ້ມີໃຈກະຣຸນາ; ໃຊ້ບໍ່ມີເວລາລໍໃຫ້ມີຫວັງຢູ່ສເມີ(ແຕ່ບໍ່ໄດ້), ຂີ້ຄຽດງາງວັນ ເຫລົ່ານີ້ ເປັນລັກສະນະຂອງນາຍຜູ້ມີໃຈສາມານ; ນາຍໃຈດີ ໂທດເປັນຄຸນ ນາຍໃຈຂີ້ໂທດ ຄຸນເປັນໂທດ ນາຍຍຸດຕິທັມ ໂທດເປັນໂທດ ຄຸນກໍເປັນຄຸນ ການຄາດຄະເນດູລັກສະນະຂອງນາຍ ມີ ៣ ປະການດັ່ງນີ້."

ທະມະນະ ຖຽງ: "ແມ່ນຢູ່ດອກ ແຕ່ວ່າ ເມື່ອຍັງບໍ່ເຖິງເວລາອັນຄວນເວົ້າ ກໍຢ່າເວົ້າ ເພາະເວົ້າບໍ່ຖືກເວລາ ເຖິງແມ່ນພຣະພະຣືຫັສບໍດີ ຜູ່ເກ່ງກ້າໃນທາງສີປາກ ກໍຍັງຖືກຕິວ່າ ບໍ່ມີຄວາມຄິດ".

ອະນຸພາຄຍະ ຕອບ: ຂໍ້ນັ້ນ ພູ່ຢ່າວິຕົກເລີຍ ຄຳທີ່ບໍ່ສົມຄວນກັບ-ເວລາ ຂ້າພະເຈົ້າບໍ່ເວົ້າດອກ, ແຕ່ເຖິງຄາວສົມຄວນແລ້ວຖ້າຂ້າພະເຈົ້າບໍ່ຮ້ອງຮຽນສເນີຄວາມເຫັນຕາມເຫດທີ່ມີ ຕຳແໜ່ງເສນາບໍດີຂອງຂ້າພະ-ເຈົ້າ ກໍບໍ່ມີປໂຍດ ດັ່ງນີ້ຂ້າພະເຈົ້າຈຶ່ງຈຳເປັນຕ້ອງເຂົ້າໄປເຝົ້ານາຍ."

---

(໑)ພຣະພະຣືຫັສບໍດີ ຄືວ່າເປັນພຣະຣືສີຜູ່ເປັນຍອດນັກປາດ.

ທະນະບະ ອວຍພອນວ່າ: "ຂໍຈົ່ງເປັນພົນສໍາເຣັດຕາມປະສົງເຖີ້ນ."

**ອະສຸພາຄຍະ** ຮັບພອນຂອງເພື່ອນແລ້ວ ກໍເຂົ້າໄປຫາຣາ**ຊາ**ປົງຄະລະໂດຍອາການນອບນ້ອມ.

ຣາຊາປົງຄະລະ ທັກຂື້ນວ່າ: "ເອີ ເຫິງນານແລ້ວບໍ່ເຫັນໜ້າເຈົ້າ."

ອະສຸພາຄຍະ ທູນຕອບ: "ຂ້ານ້ອຍຜູ່ເປັນບ່າວ ບໍ່ສູ້ມີປໂຍດອັນໃດຈັກໜ່ອຍຕໍ່ຝ່າພຣະບາດ ແຕ່ເຖິງດັ່ງນັ້ນ ເຖິງຄາວສົມຄວນແລ້ວຂ້ານ້ອຍຢູ່ອາໄສໄພເພິ່ງ ກໍຕ້ອງເຂົ້າມາເຝົ້າ, ຂ້າແຕ່ພຣະຣາຊາ ພຽງແຕ່ຫຍ້າ ແລະ ໄມ້ ພຣະອົງເອົາໃຊ້ຈີ້ມແຂ້ວ ຫລືແຄະຂີ້ຫູ ສ່ອນຄົນມີທັງກາຍ ວາຈາ ແລະ ໃຈ ຈະບໍ່ໃຄກວ່າຫຍ້າ ແລະ ໄມ້ແດ່ບໍ່! ເຖິງແມ່ນວ່າ ຂ້ານ້ອຍຈະຫ່າງເຫີນບໍ່ໄດ້ມາເຝົ້າເປັນເວລານານ ຈົນພຣະບາດເປັນເຈົ້າສົງໄສ ກໍຕາມ ແຕ່ເຫດການນັ້ນມີເພາະວ່າ :

"ແກ້ວມະນີເອົາໄປປະດັບຕີນ, ແກ້ວແວ່ນເອົາໄວ້ເທິງຫົວ ເມື່ອຈະຊື້ຂາຍກັນ ແກ້ວແວ່ນກໍມີຣາຄາທີ່ແກ້ວແວ່ນທັມມະດາ ແກ້ວມະນີ ກໍມີຣາຄາທີ່ແກ້ວ-ມະນີ.

ຜູ່ມີປີໃສ**ນັ້ນຄືງ** ແຕ່ຂາດປັນຍາ ແມ່ນຈະປະພຶດກິຣິຍາຫຍາບ ຈະຖືເອົາເປັນອາຈົນ **ກໍຍັງ**ບໍ່ໄດ້, ແປວໄຟ ເຖິງແມ່ນຈັບປັ້ນລົງ ກໍບໍ່ທັ່ງລົງລຸ່ມເລີຍ

ຂ້າແຕ່ເຫຸ ອະທັມມະດາຜູ່ເປັນນາຍ ຄວນມີຄວາມຮູ້ຈັກ ລັກສະນະພິ-ເສດຢູ່ທຸກເວລາ ເພາະວ່າ :

ເມື່ອໃດພຣະຣາຊາ ທົງຈັດການບໍຣິຫານພວກສເນີກັບພິດ ບໍ່ໃຫ້ແຕກຕ່າງ(ດີກັບ**ຊື່**ທີ່ກັນ) ເມື່ອນັ້ນ ອານຸພາບອັນເປັນກໍາລັງຂອງກິຈການທັງຫລາຍກໍເຊື່ອມຖອຍ.

ຂ້າແຕ່ພຣະອາຊາ ບຸຣຸດ(໑)ມີ ໓ ຂັ້ນ ຄື ສູງສຸດ, ຜ້ານກາງ, ແລະ ຕ່ຳ ສະນັ້ນ ຄວນເລືອກໃຊ້ໃຫ້ຖືກຕາມຊະນິດຂອງງານທັງສາມສະຖານ.

ຄົນໃຊ້ ກໍດີ ເຄື່ອງເອ້ ກໍດີ ຕ້ອງປະກອບໃຫ້ຄວນແກ່ຖານະ ດັ່ງປີ່ນເກົ້າ ຈະເອົາລົງໄປປະດັບຕີນ ຫລື ກ້ອງຂາຈະເອົາມາປະດັບຜົມ ກໍບໍ່ຄວນ.

ແກ້ວມະນີອັນມີຣາຄາແພງ ຄວນປະດັບກັບທອງຄຳ ຈະເອົາໄປປະດັບກັບແຫວນຂີ້ກົ່ວ ກໍຈະບໍ່ມີແສງເລີຍ.

ຍົກເອົາແກ້ວແອ່ນຂຶ້ນປະດັບມຸງກຸດ, ເອົາແກ້ວມະນີລົງມາປະດັບກ້ອງຂາ; ອັນນີ້ບໍ່ແມ່ນຄວາມຜິດຂອງແກ້ວມະນີ ແຕ່ຫາກເປັນຄວາມຜິດ - ຂອງຜູ່ໃຊ້ນັ້ນເອງ ແມ່ນບໍ່ຮູ້ຈັກຫຽັງເລີຍ.

ຄົນນັ້ນມີປັນຍາ, ຄົນນັ້ນຊື່ສັດ , ຄົນນັ້ນດີທັງສອງຢ່າງ; ພຣະກະສັດຜູ່ສລາດເລືອກຂ້າໃຊ້ດັ່ງນີ້ ຍ່ອມບໍຣິບູນດ້ວຍເສວະກາມາດ(໒)ທີ່ທະຣົງຄຸນ.

(໓)

ມ້າ, ສາດຕາ, ໜັງສື, ພິນ, ຖ້ອຍຄຳ, ຊາຍ, ຍິງ; ຈະໃຊ້ໄດ້ດີ ຫລື ບໍ່ດີ ແລ້ວແຕ່ວິທີຂອງຜູ່ໃຊ້.

ຊາຫຽັງກັບຜູ່ມີຄວາມພັກດີ(໔) ແຕ່ບໍ່ມີຄວາມສາມາດ, ຊາຫຽັງກັບຜູ່ມີຄວາມສາມາດ ແຕ່ຄອຍຂັດຂວາງເປັນສັດຕູ; ຂ້າແຕ່ອາຊະ ສ່ວນຂ້າພຣະບາດມີທັງຄວາມພັກດີ ແລະສາມາດ ບໍ່ຄວນທີ່ພຣະບາດຈະດູແຄວນ

---

(໑)ຄົນ, ຜູ່ຊາຍ (໒)ອາມາດຜູ່ຮັບໃຊ້, ຂ້າຣາຊການ (໓)ຫລກດາບ

(໔)ຊື່ສັດຕໍ່.

ອັນວ່າ ພຣະຣາຊາຜູ້ມີໂສດແຄວນຄົນ ກໍຈະມີແຕ່ຄົນຊັ້ນອົດເປັນຍາ ເປັນບໍລິວານ ສະນັ້ນ ພຣະອົງກໍຈະຂາດຜູ້ມີສະຕິປັນຍາເປັນທີ່ປຶກສາ; ເມື່ອ ຣາຊອານາຈັກເວັ້ນຈາກຜູ້ມີປັນຍາແລ້ວ ປະສາສະໂນບາຍ(໑)ກໍເສື່ອມ, ຫາກປະສາສະໂນບາຍເສື່ອມແລ້ວ ປະເທດກໍຫລົ້ມຈົມ.

ປະຊາຊົນພົລເມືອງຍ່ອມໂຄຣົບຢຳແຢງຄົນຜູ້ທີ່ພຣະຣາຊາຍ້ອງຍໍ, ຜູ້ ໃດຖືກພຣະຣາຊາດູແຄວນເສັງແລ້ວ ຜູ້ນັ້ນ ກໍຖືກເຂົາດູແຄວນທຸກໜ້າ.

ຖ້ອຍຄຳທີ່ເວົ້າຖືກຕ້ອງດີ ແມ່ນເດັກນ້ອຍເວົ້າ ຄົນມີປັນຍາຕ້ອງຖື- ເອົາ; ເມື່ອຍັງບໍ່ເຫັນແສງຕາເວັນ ແສງຕະກຽງກໍຈະໃຊ້ບໍ່ເປັນປໂຍດໄດ້- ຫລື?

ຣາຊາປິງຄະລະ ຖາມ: "ເອີ! ທ່ານອະສຸພາຄຍະ ເວົ້າຫຍັງຫື? ເຈົ້າກໍເປັນລູກຜູ້ມີປັນຍາແຫ່ງປະທານອານາດຂອງເຮົາຢູ່ ຖືກໃຜເວົ້າຂວັນ- ນິນທາໜໍ ຈຶ່ງຖິ້ມປະລະເລີຍບໍ່ສູ້ມາຫາເຮົາ? ຈຶ່ງບອກມາດຽວນີ້."

ອະສຸພາຄຍະ ຕອບຢ່າງກ້າຫານວ່າ: "ເທວະ ເມື່ອປະທານໂອ- ກາດໃຫ້ເວົ້າດັ່ງນີ້ ຂ້ານ້ອຍກໍຂໍຖາມ ຄື: ພຣະບາດເປັນເຈົ້າມີຄວາມປະສົງ ຈະໄປດື່ມນ້ຳ ແຕ່ບໍ່ທັນໄດ້ດື່ມກໍກັບມາ ເໝືອນວ່າມີຄວາມຕົກໃຈອັນໃດຈັກຢ່າງ ນຶ່ງ".

ຣາຊາປິງຄະລະ: "ເອີ! ແມ່ນຄວາມເຈົ້າ, ດຽວນີ້ ຂ້າພະເຈົ້າ ສັງເກດເຫັນວ່າ ໃນປ່າທີ່ເຮົາຢູ່ນີ້ ໄດ້ມີສັດປລາດເຂົ້າມາຢູ່ແລ້ວ, ສຽງມັນ ຮ້ອງດັງພິລຶກໜ້າຢ້ານແທ້ ເຈົ້າກໍຄົງໄດ້ຍິນເໝືອນກັນ, ເມື່ອຄະເນເບິ່ງຕາມ ສຽງຮ້ອງແລ້ວ ອ້າຍນັ້ນຄົງຕົວໃຫຍ່ ມີກຳລັງມະຫາເຕັມທີ ສະນັ້ນເຮົາມາ

---

(໑)ຣະບຽບການປົກຄອງ, ການເມືອງ.

ພາກັນອົບພະຍົບໜີຈາກປ່ານີ້ເຫາະ."

ອະນຸພາຄຍະ ທູນ: "ເທວະ ອັນນີ້ເປັນເຫດໃຫ້ໜ້າວິຕົກຢູ່ ສຽງນັ້ນ ຂ້ານ້ອຍກໍໄດ້ຍິນຄືກັນ, ແຕ່ຜູ້ໃດ ພຽງແຕ່ໃນເທື່ອທີແຣກ ຍັງບໍ່ທັນຮື່ນຕອງໃຫ້ຖີ່ຖ້ວນ ກໍທູນແນະນຳໃຫ້ພຣະພຸບິດາ(໑)ລະຣາຊສົມບັດໂລດ ຫລືໃຫ້ຫ້າງທຳສົງຄາມ ຜູ້ນັ້ນ ບໍ່ນັບເປັນມຸນຕີ(໒)ເລີຍ."

ຣາຊສີ ເວົ້າວ່າ: "ອະນຸພາຄຍະເອີຍ! ເຮົາມີຄວາມວິຕົກຫຼາຍ ຈະທຳປະການໃດດີ?"

ອະນຸພາຄຍະ ຄຶດໃນໃຈວ່າ "ເຫັນຈະຢ້ານອີ່ຫລີເອີ້ຍ!" ຈຶ່ງເວົ້າຮັບຮອງນຳຣາຊສີວ່າ: "ເທວະ ຕາບໃດຂ້າພະເຈົ້າຍັງມີຊີວິດຢູ່ ຕາບນັ້ນພຣະບາດເປັນເຈົ້າບໍ່ຄວນວິຕົກ ຂໍແຕ່ໃຫ້ຍຸດໜູນນ້ຳໃຈຂອງທະນະນະ ແລະບໍຣິວານອື່ນໆໄວ້ກໍແລ້ວກັນ." ວ່າແລ້ວ ອະນຸພາຄຍະ ກໍອອກມາຫາ ທະ–ນະນະໆຈຶ່ງເວົ້າວ່າ: "ເພື່ອນເອີຍ! ເຫດພິນຕົ້ນປາຍຂອງໄພນີ້ ຈະແກ້ໄຂໄດ້ ຫລື ບໍ່ໄດ້ ກໍຍັງບໍ່ຮູ້ ໂຕມາຮັບຮອງກ່ອນດັ່ງນີ້ ກໍໜ້າຢ້ານຢູ່."

ອະນຸພາຄຍະ ຫົວແລ້ວຕອບວ່າ: ອ້າຍສ່ຽວເອີຍ! ໂຕບໍ່ຕ້ອງເວົ້ານິດສາ! ເຮົາຮູ້ເຣື່ອງນີ້ດີແລ້ວ ຄື ງົວພະລິພັດ(໓) ມັນຮ້ອງຄະນອງທີ່ນັ້ນ ຊາດພືສພະ(໔)ມັນເປັນອາຫານແຊບຂອງເຮົາ ສຳຫລັບຣາຊສີແລ້ວ ຈະບໍ່ຍິ່ງດີໄປອີກຫລື?"

ທະນະນະ: "ອ້າວ! ຖ້າຈັ່ງຊັ້ນ ເປັນຫຍັງບໍ່ບອກນາຍ ກຳຈັດຄວາມຢ້ານຂອງນາຍໃຫ້ຫາຍເສັຽໃນເວລານັ້ນໂລດບໍ່ດີຫລື?"

---

(໑)ເຈົ້າແຜ່ນດິນ (໒)ທີ່ປຶກສາ, ອັຄມົນຕີ (໓)ງົວພະລິພັດ: ງົວເຖິກໃຫຍ່–(ສ. ພລີພັທທ) (໔)ພືສພະ: ງົວ (ສ. ພຣືສພະ)

ອະນຸພາຄຍະ ຕອບ: "ໂທ້! ຖ້າໄປບອກກ່ອນແລ້ວ ເຮົາຈະໄດ້ຮັບຣາງວັນຫລື? ອີກປະການນຶ່ງ ເພິ່ນວ່າ ບໍ່ຄວນເຮັດໃຫ້ນາຍພົ້ນຈາກການເພິ່ງບ່າວເລີຍ ເພາະຖ້າເຮັດໃຫ້ເພິ່ນພົ້ນເພິ່ງແລ້ວ ບ່າວກໍຈະເປັນຄືນຄືແມວ ຊື່ ທະທິກັນ ນັ້ນແຫລະ."

ທະມະນະ ຖາມ: "ເຣື່ອງເປັນຢ່າງໃດ?"

ອະນຸພາຄຍະ ເລົ່ານິທານ:

ນິທານແອັນທີ ປ

ເຣື່ອງ ແມວ ກັບ ຣາຊສີ

ຣາຊສີ ຊື່ ມະຫາວິກົມ ອາໄສຢູ່ພູອັນພຸຫລິງຂອນ ໃນປ່າອຸດຕຣາບິດ ເມື່ອນອນຢູ່ໃນຖ້ຳ ມີໜູຂຶ້ນໄປແທັນຂົນສ້ອຍຄໍ ຣາຊສີຕື່ນຂຶ້ນ ເຫັນຂົນສ້ອຍຄໍ-ຂາດ ກໍມີຄວາມຄຽດຈະຄຸບໜູແຕ່ບໍ່ທັນ ໜູແລ່ນລົງຫລືບຫີນໄປ ຣາຊສີຈຶ່ງມານອນຄຶດຢູ່ວ່າ: ເຮັດຢ່າງໃດໜໍ! ມີຄຳພາສິດບົດນຶ່ງວ່າ "ຜູ້ໃດຈະຜາບສັດຕູເລັກນ້ອຍດ້ວຍຄວາມກ້າຫານບໍ່ສຳເຣັດ ເມື່ອປະສົງຈະຜາບໃຫ້ໄດ້ ກໍຕ້ອງຫາຜູ້ທີ່ພໍສົມເປັນຄູ່ຜາບກັນ, ຊ່າງໄມ້ ເມື່ອຖາກໄມ້ຕ້ອງໃຊ້ຂວານ ແຕ່ເມື່ອຈະຫຍິບຜ້າຕ້ອງໃຊ້ເຂັມ." ເມື່ອຄຶດດັ່ງນີ້ແລ້ວ ຈຶ່ງອອກໄປຫາບ້ານຄົນ ກໍໄປພົບແມວຕົວນຶ່ງ ຊື່ ທະທິກັນ ຈຶ່ງຊວນມາຢູ່ນຳໂດຍສັນຍາຈະໃຫ້ຊີ້ນຢ່າງດີເປັນອາຫານ, ຕັ້ງແຕ່ແມວມາຢູ່ນຳຣາຊສີ ໜູກໍບໍ່ກ້າມາຫາກິນ ຣາຊສີບໍ່ຖືກໜູມາກຸກກວນ ກໍນອນເປັນສຸກສະບາຍ ຖ້າຣາຊສີໄດ້ຍິນສຽງໜູເທື່ອໃດ ກໍຕື່ນຣາງວັນໃຫ້ແມວທຸກໆເທື່ອ ເທິງມາ ໜູອຶດອາຫານ ອົດທົນທົນບໍ່ໄດ້ ກໍອອກມາຫາກິນ ແມວເຫັນກໍເຕັ້ນຄຸບເອົາໄປກິນເສັຽ ຄັນຣາຊສີບໍ່ໄດ້ຍິນສຽງໜູ - ນັບວ່າໝົດສັດຕູແລ້ວ ບໍ່ຕ້ອງການໃຊ້ແມວອີກຕໍ່ໄປ ກໍເລີຍບໍ່ເອົາໃຈໃສ່....

ໃນການໃຫ້ອາຫານແກ່ແມວ ເພາະຈັ່ງຊັ້ນ ຂ້າພະເຈົ້າຈຶ່ງວ່າ " ບໍ່ຄວນ-ເຮັດໃຫ້ນາຍພົ້ນຈາກການເພິ່ງບ່າວ....ໆ" ວ່າແລ້ວພາຈອກທັງສອງ ກໍພາກັນອອກໄປຫາງົວບັນທະກະ ພາທະມະນະ ທຳທ່າສະງ່າຜ່າເຜີຍ ບັງຢູ່ແຄມກົກໄມ້ ແລ້ວ ອະສຸພາຄຍະຈຶ່ງເວົ້ານຳງົວບັນທະກະວ່າ: "ເອີຍ..! ທ່ານງົວ ຮູ້ບໍ້! ຂ້າພະເຈົ້ານີ້ເປັນເຈົ້າໜ້າທີ່ອັນພຣະຣາຊາປິງຄະລະຕັ້ງໃຫ້ເປັນຜູ້ເບິ່ງແຍງປ່າ ທ່ານເສນາບໍດີທະມະນະ ໃຫ້ຂ້າພະເຈົ້າມາບອກທ່ານໃຫ້ໄປຫາໂດຍໄວ ຖ້າບໍ່ໄປຈຶ່ງໜີຈາກປ່ານີ້ ໃນດຽວນີ້ ບໍ່ດັ່ງນັ້ນທ່ານຈະໄດ້ຮັບຄວາມຜິດ."

ງົວບັນທະກະບໍ່ຮູ້ທຳນຽມຂອງປະເທດ ໄດ້ຟັງດັ່ງນັ້ນ ກໍມີຄວາມຢ້ານ ຍ່າງເຂົ້າໄປຫາພາທະມະນະ ສະແດງຄວາມໂຄຣົບແລ້ວ ເວົ້າວ່າ: ຂ້າແຕ່ທ່ານເສນາ ຂໍໄດ້ກະຣຸນາບອກຂ້າພະເຈົ້າວ່າ ຈະໃຫ້ຂ້າພະເຈົ້າທຳຢ່າງໃດ?

ທະມະນະ ບອກວ່າ: "ເມື່ອທ່ານປະສົງຈະຢູ່ໃນປ່ານີ້ຕໍ່ໄປ ທ່ານຈຶ່ງໄປອ່ອນນ້ອມຕໍ່ຣາຊາປິງຄະລະ ຜູ້ເປັນນາຍຂອງເຮົາ."

ງົວບັນທະກະ ເວົ້າວ່າ: "ເມື່ອທ່ານສັນຍາວ່າຈະບໍ່ທຳອັນຕຣາຍໃຫ້ແກ່ຂ້າພະເຈົ້າແລ້ວ ຂ້າພະເຈົ້າກໍຈະໄປ."

ທະມະນະ ຮັບຮອງວ່າ: "ທ່ານບໍ່ຕ້ອງຢ້ານໃນຂໍ້ນັ້ນ ເພາະວ່າທັມມະດາລົມພາຍຸ ຈະບໍ່ຫັກຫານກໍຫຍ້າ ແລະ ໄມ້ອໍ້ທີ່ໂອນອ່ອນໄປຕາມ - ແຕ່ຍ່ອມຫັກຫານທຳລາຍຕົ້ນໄມ້ທີ່ສູງລື່ນໃດ ຜູ້ມີອິດທານຸພາບຍິ່ງໃຫຍ່ ຍ່ອມບໍ່ຫັກຫານຜູ້ນ້ອຍສັນນັ້ນ"

ວ່າແລ້ວ ສອງສະຫາຍກໍພາງົວບັນທະກະເຂົ້າໄປຫາຣາຊສີ....

ໃຫ້ງົວເຊົາຢູ່ແຕ່ໄກ ແລ້ວຕົນເອງເຂົ້າໄປຫາຣາຊາປິງຄະລະ.

ປິງຄະລະ ຖາມວ່າ: "ເຫັນຕົວມັນແລ້ວບໍ້!" ວະສຸພາຄຍະ ຕອບວ່າ: "ເຫັນແລ້ວ ຕາມທີ່ພຣະບາດເປັນເຈົ້າໄດ້ຍິນສຽງນັ້ນ ເປັນການສົມຈິງ ເພາະອ້າຍນັ້ນ ຕົວໃຫຍ່ມະຫືມາ(໑) ໜ້າຢ້ານແທ້ ຂ້າພະເຈົ້າໄດ້ແນະນຳມັນ ບັດນີ້ມັນຢາກມາເຝົ້າພຣະບາດເປັນເຈົ້າ ຂໍໃຫ້ຈັດການຮັບຮອງໄວ້ ແຕ່ເຖິງຢ່າງໃດກໍຕາມ ພຽງແຕ່ໄດ້ຍິນສຽງກໍຢ່າຟ້າວຢ້ານ ເພາະທັມມະດາ ຝາຍກັ້ນນ້ຳ ຍ່ອມຂາດພັງທະລາຍຍ້ອນກະແສນ້ຳເຊາະ, ຂໍ້ປຶກສາທີ່ບໍ່ອຳບັງກໍສັນດຽວກັນ, ມິດພາບອັນສນິດຍ່ອມແຕກມ້າງຍ້ອນການສັບສໍ່, ຄົນຂີ້ຢ້ານຍ່ອມແຕກຕື່ນຍ້ອນພຽງແຕ່ໄດ້ຍິນສຽງ.

ເມື່ອຍັງບໍ່ໄດ້ພິຈາຣະນາຫາເຫດ ພຽງແຕ່ໄດ້ຍິນສຽງກໍຢ່າຟ້າວຢ້ານ ນາງໂສເພນີ(໒)ເມື່ອລາວໄດ້ພິສູດ(໓)ມູນເຫດຂອງສຽງໄດ້ຈຶ່ງໄດ້ຮັບຄວາມຍ້ອງຍໍນັບຖືຈາກຊາວເມືອງ."

ຣາຊາປິງຄະລະ ຖາມ: "ເຣື່ອງເປັນຢ່າງໃດ?"

ວະສຸພາຄຍະ ຖແລງ:

## ນິທານແວ່ນທີ ໒

## ເຣື່ອງນາງໂສເພນີ

ທີ່ພູສີ ອັນຢູ່ໃກ້ນະຄອນພິມບູຣີ ມີສຽງລືກັນວ່າ ເທິງຈອມພູນັ້ນ ມີຜີຮ້າຍຕົວນຶ່ງ ຊື່ ຄັນດາກັນ(໔) ອາໄສຢູ່.

ເຣື່ອງເດີມມີວ່າ "ໂຈນຄົນນຶ່ງ ໄດ້ລັກເອົາກະດິງໃຫຍ່ຂອງວັດນຶ່ງ-

---

(໑)ໃຫຍ່ຫລາຍ(໒)ຍິງແມ່ຈ້າງ(໓)ພິສູຈນ໌, ເບິ່ງໃຫ້ຄັກ(໔) ກະດິງ.

ໄປ ເວລາພອນເດີນທາງມາເຖິງພູສີ ເລີຍຖືກເສືອຂົບຕາຍ, ໝູ່ລີງທີ່ອາໄສ ຢູ່ໃນພູສີນັ້ນ ມາໄດ້ກະດິງໄປ ກໍພາກັນສັ່ນຫລິ້ນສເນີ. ເລື່ອງທີ່ເສືອຂົບຄົນ ຕາຍນັ້ນ ກໍມີຄົນຮູ້ຢູ່ ທັງເມື່ອໂຈນຕາຍແລ້ວ ກໍຍັງໄດ້ຍິນສຽງກະດິງດັງຢູ່ ຊາວເມືອງພາກັນຢ້ານກົວອັນຕະລາຍມາກ ຈົນແຕກເມືອງໜີ ຕໍ່ມາມີຍິງໂສ –ເພນີ ຄົນນຶ່ງ ຊື່ ກະອາໄລ ໄດ້ສືບສວນຄັກແນ່ແລ້ວວ່າ ສຽງນັ້ນ ແມ່ນ ສຽງກະດິງທີ່ລີງສັ່ນ ຈຶ່ງສເນີເລື່ອງແກ່ພຣະຣາຊາຂອງເມືອງນັ້ນ ຂໍລາສາ ໄປຕາບໜີ ຊື່ຄົນຕາກັນ ໃຫ້ສໍາເຣັດ ພຣະຣາຊາມີຄວາມຍິນດີປະທານເງິນ ຄໍາໃຫ້ນາງຕາມທີ່ນາງຂໍແລ້ວ ນາງກໍພີທີໄປທໍາການບູຊາເທພດາຢູ່ເທີງພູ– ນັ້ນ ແຕ່ທີ່ແທ້ ນາງໄດ້ຊື້ເອົາໝາກໄມ້ທີ່ລີງມັກໄປຖິ້ມເຮັ່ງຮວາຍໄວ້ໃນປ່າ ພໍລີງເຫັນໝາກໄມ້ ກໍວາງກະດິງລົງມາກິນໝາກໄມ້ ນາງກະອາໄລຄືໄດ້ກະ ດິງ ແລ້ວກໍຟ້າວກັບມາເມືອງ ແຕ່ນັ້ນມາສຽງກະດິງທີ່ຄົນທັງຫລາຍເຂົ້າໃຈ ວ່າແມ່ນສຽງຜີຄົນຕາກັນຮ້ອງໃຫ້ນັ້ນ ກໍມິດໄປ ແລະ ນາງກໍໄດ້ຮັບຄວາມ– ນັບຖືຈາກຄົນທັງຫລາຍ"ທີ່ນັ້ນເອງ! ເພາະຈັ່ງຊັ້ນ ຂ້າພະເຈົ້າຈຶ່ງວ່າພຽງ ແຕ່ໄດ້ຍິນສຽງ ກໍຢ່າຟ້າວຢ້ານ.

ໝາຈອກວະສຸພາຄຍະ ເວົ້າທີ່ນີ້ ແລ້ວ ກໍອອກໄປ ພາງົວນັນທະກະເຂົ້າມາຫາຣາຊສີ ແລະຕໍ່ນັ້ນມາ ຣາຊສີກັບງົວກໍໄດ້ເປັນ– ສະຫາຍຮັກແພງສນິດສນົມກັນຢູ່ເປັນສຸກສໍາຣານໃນປ່ານັ້ນສືບມາສັງກາລະ ນານ ແຕ່ມິຕພາບອັນສນິດສນົມຂອງຣາຊສີກັບງົວນັ້ນ ໃນກາລະຕໍ່ມາ ກໍຖືກ ໝາຈອກວະສຸພາຄຍະມຸນຕີ ທໍາລາຍເສັ່ງຈົນສອງສະຫາຍນັ້ນໄດ້ຮັບຄວາມພິ –ນາດ.

ນາງຕັນໄຕ ເວົ້ານິທານຮອດບ່ອນນີ້ ກໍພໍດີເປັນເວລາແຈ້ງສວ່າງ

ນາງຈຶ່ງລົມກັບນ້ອງສາວວ່າ: "ນ້ອງວິໄລວັນເອີຍ! ນິທານຕອນທີ່ໄປ ໃນເລື່ອງພາຈອກວະສຸພາຄະຍະລັບສົ່ງຫຍິງໃຫ້ ໂອ ກັບ ອາຊສີ ແຕກກັນນັ້ນ ຍັງຢູ່ຫລາຍ ແລະ ມ່ວນກວ່າທີ່ເວົ້າມາແລ້ວນີ້ ຖ້າເອື້ອຍຫາກມີອາຍຸຍືນຕໍ່ໄປອີກຈັກຄືນນຶ່ງ ເອື້ອຍຈະເວົ້າໃຫ້ຟັງຈົນສຸດ ແຕ່ວາສນາຊາຕາຂອງເອື້ອຍ ເຫັນຈະສຸດລົງພຽງໃນວັນນີ້ແລ້ວ ຄົງຈະບໍ່ໄດ້ເຫັນໜ້າຂອງນ້ອງແລະບໍ່ໄດ້ເວົ້ານິທານໃຫ້ນ້ອງຟັງອີກຕໍ່ໄປ."

ຝ່າຍພຣະຍາວິມະລະ ນອນຟັງນິທານຂອງນາງຕັນໄຕຢູ່ ຄິດຊື່ນມ່ວນໃນພຣະໄທ ພໍໃຈໃນນິທານຂອງນາງເປັນອັນມາກ ຈຶ່ງຫົງຮຳເພີງວ່າ: ຈະໃຫ້ນາງຢູ່ອີກຕໍ່ໄປອີກຄືນນຶ່ງ ເພື່ອໃຫ້ນາງໄດ້ເວົ້ານິທານພໍສຸດ ແລ້ວຈຶ່ງຈະໃຫ້ຂ້າເສັຽ, ຮຳເພີງດັ່ງນີ້ແລ້ວ ກໍສະເດັດອອກຈາກທີ່ບັນທົມ ລົງສນານຄັນທະວາຣີ(໑) ແລ້ວກໍສະເດັດອອກສນາມປ່ອນປະຊຸມອຳມາດ.

ຝ່າຍມະຫາອຳມາດຜູ້ເປັນບິດາຂອງນາງຕັນໄຕ ແຕ່ໃນກາງຄືນ-ກໍນອນບໍ່ຫລັບຕລອດຄືນ ເພາະເປັນຫ່ວງນຳລູກ ຕື່ນເຊົ້າມາແສງທຸກໃຈຫລາຍໃນການທີ່ຕົນເອງຈະໄດ້ເປັນຜູ້ປະຫານບຸດຕີຂອງຕົນເອງ ແຕ່ພໍຂຶ້ນໄປເຝົ້າ-ພຣະເຈົ້າແຜ່ນດິນ ກໍບໍ່ເຫັນພຣະເຈົ້າແຜ່ນດິນຕັດສັ່ງແນວໃດ ຈົນເຖິງເວລາເລີກສນາມ ທ່ານມະຫາອຳມາດຈຶ່ງມີຄວາມເບົາໃຈ.

ເຖິງຄືນທີສອງ ເວລາຂ້ອນຊິແຈ້ງ ນາງວິໄລວັນ ກໍປຸກເອື້ອຍຂຶ້ນ-ໃຫ້ເວົ້ານິທານໃຫ້ຟັງດັ່ງຄືນກ່ອນ, ນາງຕັນໄຕລຸກຂຶ້ນ ທູນຂໍອະນຸຍາດນຳພຣະຍາ ແລ້ວຈຶ່ງເວົ້ານິທານເລື່ອງໂອນັນທະກະ ກັບ ອາຊສີປີງຄະລະ ທີ່ຖືກພາຈອກຍຸຍົງໃຫ້ແຕກກັນຕໍ່ໄປວ່າ:

ຢູ່ມາວັນນຶ່ງອາຊສີ ຊື່ ສະຕັນທະກັນ ພີ່ຊາຍຂອງອາຊສີປີງຄະລະ

(໑) ອາບນ້ຳຫອມ.

ນາຍາມ ປິງຄະລະຈຶ່ງອອກໄປຫາເບື້ອນລັງງພີ່ຊາຍ, ໂວນັບທະກະເຫັນດັ່ງນັ້ນ ຈຶ່ງຖາມປິງຄະລະວ່າ: "ໂຍ້ວ! ສັດທີ່ທ່ານຂ້ານານີ້ເຊື່ອວ່າມີ ໄປໃສພິດ"

ອາຊາປິງຄະລະ ຕອບ: "ອະສຸພາຄຍະ ແລະ ທະນະນະ ນັ້ນແຫລະ ເປັນຜູ້ຈັດການພິດ"

ນັນທະກະ ວ່າ: "ໂອ! ຈັ່ງຊັ້ນກໍບໍ່ຄວນແ ລ້ວ ອ້າຍສອງຕົວນັ້ນມັນກິນຫລາຍປານນັ້ນແທ້ຫລື?"

ອາຊຸລິຕອບ: "ກໍກິນແດ່ ໃຫ້ຕົວອື່ນແດ່ ເຊີເຊີນເປຊັ້ນແຫລ້ວ!"

ນັນທະກະວ່າ: "ເປັນຫຍັງມັນມາເຮັດຕາມໃຈ ໂດຍບໍ່ໄດ້ຮັບອະນຸຍາດດັ່ງນີ້ ໂພດລາດອກ! ເຊີເຊີນເກີນໄປ"

ອາຊາປິງຄະລະ ຕອບ: "ໂອຍ! ມັນເປັນຈັ່ງຊັ້ນຂອງພິດທຸກອັນນັ້ນແຫລະ"

ນັນທະກະ ວ່າ: "ຖ້າຈັ່ງຊັ້ນກໍບໍ່ສົມຄວນຫລາຍ ເພິ່ນຍັງບອກສອນວ່າ: ບ່າວຄົນໃດ ເມື່ອຍັງບໍ່ໄດ້ຄວບໃຫ້ນາຍຮູ້ກ່ອນແລ້ວກໍບໍ່ຄວນເຮັດສິ່ງໃດຕາມໃຈ ເວັ້ນແຕ່ເຮັດເພື່ອປ້ອງກັນເຫດຮ້າຍ ອັນຈະເກີດແກ່ນາຍ ທີ່ນີ້; ຂ້າແຕ່ພຣະຣາຊາ ອາມາດຄວນມີລັກສະນະຄືພັນໍ້າຂອງອີສີ ຄືເວລາຫງົ່ນ ໃຫ້ໄຫລອອກແຕ່ໜ້ອຍ ເວລາຖອກໃສ່ໃຫ້ຂັງໄວ້ໄດ້ຫລາຍ, ຜູ້ໃດເອົ້າວ່າ ຊາຫຍັງກັບເງິນອັດດຽວ ຜູ້ນັ້ນ ເປັນຄົນໄຮ້ຊັບ, ຜູ້ໃດຄອຍຕື່ມແຖມພຣະຣາຊຊັບ ແມ່ນພຽງແດງດຽວທຸກໆອັນ ຜູ້ນັ້ນເປັນອາມາດທີ່ດີແທ້....ເພາະຄັງເປັນຫົວໃຈຂອງທ້າວພຣະຍາ; ປະການນຶ່ງ ຊາຍຜູ້ສົມຊັບແລ້ວແມ່ນປະພຶດດີຖືກຕາມປະເພນີ ກໍບໍ່ເປັນທີ່ນິຍົມຂອງຄົນທັງຫລາຍ......

ບໍ່ໝໍາ ເມັງຂອງຕົນກໍເອົາໃຈອອກ ບໍ່ຕ້ອງເວົ້າເຖິງຜູ້ອື່ນກໍໄດ້ ແລະ ຂໍ້ຕໍ່ໄປນີ້ ເປັນຄວາມເສັຽຫາຍແກ່ການດໍາເນີນນະໂຍບາຍຂອງປະເທດ ຄື:

ຄວາມຟຸມເຟືອຍເຊີເຊີມ, ຂາດການສຶບສວນ, ການເກັບຫອມລັບ ໂດຍຜິດທາງ ແລະ ການສໍ້ໂກງຂອງຜູ່ຢູ່ທາງ ເຫລົ່ານີ້ ເປັນລັກສະນະຊົ່ອ ຮ້າຍຂຂອງການຄັງ."

ຝ່າຍຣາຊສີ ສະດັບທະກັນ ກໍເວົ້າຂຶ້ນວ່າ: "ຟັງແດ່ນ້ອງ! ອະສຸພາ ຄຍະ ກັບ ທະມະນະ ອາໄສເຮັດການບໍາເຈົ້ານາເທິງ ໄດ້ຮັບຕໍາແໜ່ງເປັນ-ກາຣະຍາທິກາຣີ(ຫົວໜ້າການບໍຣິຫານ) ໃນໜ້າທີ່ຮັກສາໄມຕີ ແລະ ສົງຄາມ: ທັມມະດາຜູ້ມີອໍານາດບໍ່ຄວນຕັ້ງ ກາຣະຍາທິກາຣີ ໃນຕໍາແໜ່ງ ທະນາທິການ (ຫົວໜ້າການຄັງ) ເພາະຕາມປະເພນີເຄີຍໄດ້ຍິນມາວ່າ:-

ພຣາມ(ນັກບວດ) ໑ ນັກຣົບ ໑ ພົງພັນພີ່ນ້ອງ ໑ ທັງສາມພວກນີ້ບໍ່ ຄວນໃຫ້ເປັນ ທະນາທິການ ຍ້ອນວ່າ:-

ພຣາມ ຂີ້ຖີ່ ບໍ່ຍອມໃຊ້ຈັບ ເຖິງແມ່ນຈັບນັ້ນຈະມີໄວ້ສໍາຫລັບໃຊ້ວຽກ ກິດການ, ໃຫ້ນັກຣົບມີໜ້າທີ່ໃນການເງິນ ກໍຈະຖອດດາບອອກຈັດການ, ໃຫ້ພີ່ ນ້ອງວົງວານ ເປັນຂຸນຄັງ ກໍຈະກິນກິນໝົດ ເພາະຖືວ່າຕົນເປັນພີ່ນ້ອງ.

ຜູ້ທີ່ທໍາຄວາມຊອບໄວ້ ເມື່ອໄດ້ມີອໍານາດ ກໍບໍ່ສູ້ໃສ່ໃຈໃນຄວາມຜິດ ຂອງຕົນ ຄິດລະຫາວ່າ ໄດ້ທໍາປໂຍດແກ່ນາຍມາແລ້ວ ຈຶ່ງຄິດກະບົດສໍ້ໂກງ ກິນສເມີໄປ.

ຂ້າໃຊ້ເກົ່າ ແມ່ນກະທໍາຜິດ ກໍບໍ່ສູ້ຕົກໃຈຢ້ານ ເຮັດອັນໃດເອົາແຕ່ ໃຈໂຕ.

ອາມາດທຸກຄົນບໍ່ຄວນຕັ້ງແຕ່ງໃຫ້ຮັ່ງມີຫລາຍ ເພາະວິທີດໍາເນີນ-

ນະໂຍບາຍຂອງນັກປາດ ເພິ່ນວ່າ ອິດທິຂອງຊັບພາຍ້ອນໃຈຄົນໃຫ້ເປັນໄປຕ່າງໆ; ປໂຍດມາເຖິງແລ້ວ ບໍ່ເອົາໄວ້ໃຫ້ໄດ້, ໝູນວຽນຊັບ (ຫາທາງໄດ້) ຖແລງຕາມໃຈບາຍສເນີ, ເສີຍເມີຍຕໍ່ໜ້າທີ່, ຂາດຄວາມພິຈາຣະນາ, ມົວເມົາແຕ່ໃນຄວາມສນຸກ; ເຫລົ່ານີ້ ເປັນຄວາມເສັຽຫາຍຂອງອານາດ.

ລົງໂທດແດ່, ເລື່ອນຕຳແໜ່ງແດ່, ຍ້າຍໜ້າທີ່ແດ່, ນີ້ເປັນອິທິດຳເນີນການຂອງທ້າວພຣະຍາ; ອານາດສ່ວນຫລາຍເປັນຄືກັບກັບຝີອັນໃຄ່ຕຶງ ຖ້າບໍ່ບີບແດ່ກໍບໍ່ຄາຍເງິນຫລວງອອກມາໄດ້.

ຄວນຖອດເອົາບາດຜູ້ຮັກສາຄັງໃຫ້ເລື້ອຍໆ ເພາະວ່າ ຜ້າອາບນ້ຳບິດເທື່ອດຽວ ນ້ຳຈະໄຫລອອກໝົດໄດ້ຢ່າງໃດ?

ເມື່ອຮູ້ດັ່ງນີ້ ກໍຄວນຈັດການໃຫ້ຮາບຄາບສາຈັກເທື່ອ ໃນເມື່ອມີໂອກາດ."

ຣາຊາປົງຄະລະ ຮັບວ່າ: "ແມ່ນແທ້! ອ້າຍພາຈອກທັງສອງຕົວນີ້ ບໍ່ສູ້ຫົວຊາຄຳສັ່ງຂອງຂ້າພະເຈົ້າເລີຍ."

ສະຕັບຫະກັນ ສົ່ງເສີມ: "ຖ້າຈັ່ງຊັ້ນເຮົາບໍ່ຄວນປະໄວ້ເປັນອັນ-ຂາດ ຕ້ອງພ້າວຈັດການ ເພາະເພິ່ນວ່າ ພຣະຣາຊາບໍ່ຄວນປະປ່ອຍໃຫ້ໂອ-ຣົດ(໑)ດື້ດ້ານ, ອັນສີຣິຂອງຜູ້ດື້ດ້ານນີ້ແຕ່ຈະມົວໝອງ, ຄອງໄມຕີຂອງຜູ້ປັ້ນໄປມີແຕ່ຈະສູນເສັຽ, ສະກຸນຂອງຜົວເມັຽທີ່ບໍ່ມີອິນທີໃຫ້ເກີດຄວາມກຳ-ໜັດ ມີແຕ່ຈະສ້ຽງສູນ, ຄວາມດີຂອງຜູ້ທີ່ມາກມູນໄປດ້ວຍຄວາມໂລບ ມີແຕ່ຈະຫະລາຍ, ຜົນແຫ່ງຄວາມຮູ້ຂອງຜູ້ປະພຶດຮ້າຍ ມີແຕ່ຈະລ່ວງຫລົ່ນ, -ຄວາມສຸກໃນສະກົນ(໒)ຂອງຄົນຂີ້ຖີ່ ມີແຕ່ຈະຫ່າງເຫ, ພຣະຣາຊາທີ່ມີອາ-ນາດໂລເລ ມີແຕ່ຈະດັບອາຍ.

---

(໑)ລູກຊາຍ (໒)ສະກົນ: ຮ່າງກາຍ(ສ.ສະກັນທະ)

ພຣະກະສັດ ເປັນເໝືອນບິດາ ທິງປົກປັກຮັກສາປະຊາກອນໃຫ້ພົ້ນໄພ ຈາກຂ້າເສິກ, ຈາກເສອະການາດ, ຈາກສັດຕູ, ຈາກຜູ່ ທີ່ທິງໂພດຜາຍ, ແລະ ຈາກຄວາມໂລບຂອງທ້າວພຣະຍາເອງ.

ສະນັ້ນ ນ້ອງຄວນຟັງຄຳເຕືອນຂອງຂ້າພະເຈົ້າ ຄື ຂໍແນະນຳໃຫ້- ຕັ້ງໂອນັ້ນທະກະ ໃນຕຳແໜ່ງໂພຊະນາທິການ(໑)ເສັຽ ເພາະເປັນຜູ່ບໍ່ຣິໂພກ ແຕ່ສັສຍາຫານ (໒) ຄົງບໍ່ຕ້ອງການຈະສໍ້ໂກງ."

ຣາຊາປິງຄະລະ ເຫັນຊອບຕາມຂໍ້ແນະນຳ ຈຶ່ງຕັ້ງໂອນັນທະກະ ໃຫ້ ເປັນ ໂພຊະນາທິການ ປົດອະສຸພາຄຍະ ແລະ ທະນະນະ ອອກເສັຽຈາກຕຳ -ແໜ່ງນັ້ນ.

ຕໍ່ມາ ອະສຸພາຄຍະ ແລະ ທະນະນະ ບໍ່ສາມາດຈະລັກລອບກິນອາ- ຫານໄດ້ຕາມເຄີຍ ມີຄວາມຝືດເຄືອງລົງ ຈຶ່ງຜາຣິບຄວາມທຸກຕໍ່ກັນວ່າ ເຮົາ ຈະທຳຢ່າງໃດ?

ອະສຸພາ. ຍະ ຕອບວ່າ: "ຈະໂສກເສົ້າເສັຽໃຈໄປເຮັດຫຍັງ? ເພາະເຣື່ອງນີ້ມັນເປັນຄວາມຜິດຂອງເຮົາເອງ ເຮົາເປັນຜູ່ຊັກຈູງໃຫ້ຣາຊສີ ກັບໂອເປັນມິດກັນໄດ້ ເຮົາກໍຕ້ອງຫາອຸບາຍທຳລາຍມິຕພາບນັ້ນໃຫ້ໄດ້ເໝືອນ- ກັນ ເພາະວ່າ ຄົນສລາດຫລັກແຫລມ ສາມາດປັ້ນເຣື່ອງທີ່ບໍ່ຈິງ ໃຫ້ເຫັນຈິງ ໄດ້ ດັ່ງດຽວກັນກັບຊ່າງແຕ້ມທີ່ສລາດສາມາດຂຽນຮູບໃຫ້ພື້ນທີ່ຮາບໃຫ້ຄົນເຫັນ ເປັນບ່ອນສູງບ່ອນຕ່ຳໄດ້.

ຜູ່ມີໃຈບໍ່ຫວັ່ນໄຫວຫລົງລືມໃນເຫດການອັນເກີດຂຶ້ນປັດຈຸບັນທັນດ່ວນ ຜູ່ນັ້ນ ສາມາດແກ້ໄຂຄວາມຂັດຂ້ອງໄດ້ ເໝືອນດັ່ງພະຣິຍາແຕ່ງຄົນລ້ຽງໂອກັບ

---

(໑)ໂພຊະນາທິການ: ຫົວໜ້າກອງສະບຽງ (໒)ສັສຍາຫານ: ຫຍ້າ

ຊາຍຊູ້ ໒ ຄົນ."

ທະນະນະ ຖາມ: "ເຣື່ອງເປັນຢ່າງໃດ?"

ວະສຸພາຄຍະ ເລົ່ານິຍາຍ:-

ນິທານແອັນທີ ໔

ເຣື່ອງ ເມັຽຂອງຄົນລ້ຽງງົວ

ໃນເມືອງທະວາຣາວະດີ ມີເມັຽຂອງຊາວລ້ຽງງົວຄົນນຶ່ງ ເປັນຄົນໃຈໂລເລ ລັກຫລິ້ນຊູ້ ກັບ ທັນທະບາຍິກ(ຕາແສງ) ແລະ ກັບລູກຊາຍຕາແສງນັ້ນອີກ ເພາະ ເພິ່ນກ່າວວ່າ:

ທັມມະດາໄຟບໍ່ຫ່ອນອີ່ມຟືນ, ທະເລໃຫຍ່ບໍ່ອີ່ມນ້ຳ, ຄວາມຕາຍບໍ່ອີ່ມສາໃນຊີວິດຂອງສັດ, ນາງຜູ້ງາມກະດັດ ກໍບໍ່ອີ່ມໃນຜູ້ຊາຍ.

ຕໍ່ມາວັນນຶ່ງ ເມັຽຄົນລ້ຽງງົວກຳລັງຊື່ນຊົມຢູ່ກັບລູກຊາຍຂອງຕາແສງ, ພໍດີຕາແສງກໍເຂົ້າມາອີກ, ນາງເຫັນຕາແສງມາ ຈຶ່ງເອົາລູກຊາຍຂອງຕາແສງເຊື່ອງໄວ້ໃນຊ່ອມເຂົ້າ ແລ້ວກໍອອກມາພີຣົມຊົມຊື່ນກັບຕາແສງນັ້ນອີກ, ເວລານັ້ນ ຜົວກັບມາຈາກໄຮ່ ພໍນາງເຫັນຜົວມາ ກໍບອກກັບຕາແສງໃຫ້ຖືຄ້ອນທຳທ່າຮ້າຍໄວ້ ແລ້ວໃຫ້ຟ້າວອອກໄປ, ຜົວມາເຖິງຈຶ່ງຖາມເມັຽວ່າ: "ຕາແສງເຂົ້າມາຫຍັງໜີ້?" ເມັຽ ຕອບວ່າ: "ບໍ່ຈັກ! ຮ້າຍໃຫ້ລູກຊາຍແນວໃດບໍ່ຮູ້ ລູກຊາຍຢ້ານແລ່ນມາເພິ່ງຂ້ອຍ ຂ້ອຍເລີຍເອົາເຊື່ອງໄວ້ໃນຊ່ອມເຂົ້າຫັ້ນເນ! ພໍ່ຊອກຫາລູກຊາຍບໍ່ເຫັນ ກໍເລີຍຮ້າຍປືດປ້າດກັບໄປ." ວ່າແລ້ວ ນາງກໍຈູງແຂນລູກຊາຍຂອງຕາແສງອອກມາໃຫ້ເບິ່ງ:-ນີ້ແຫລະ ເພິ່ນຈຶ່ງວ່າ:

ທັມມະດາສັດຕີ ກິນອາຫານແຕ່ ໒ ທີ່ ມີປັນຍາຫລັກແຫລມ ໔ ທີ່

ແລະ ມີກົນມາຍາ ໗ ທີ່ ແຕ່ມີການຣາຄະເຖິງ ໘ ທີ່ ເຫດສະນັ້ນຂ້າພະເຈົ້າຈຶ່ງວ່າ ຜູ້ໃດມີໃຈບໍ່ຫວັ່ນໄຫວຕໍ່ເຫດການທີ່ເກີດຂຶ້ນໃນປັດຈຸບັນ ຜູ້ນັ້ນກໍສາມາດແກ້ໄຂຄວາມຂັດຂ້ອງໄດ້ ດັ່ງເນັ້ງຂອງຊາຍລ້ຽງງົວ.

ທະມະນະ ເວົ້າວ່າ: "ທີ່ທ່ານເວົ້າມານີ້ແມ່ນຢູ່! ແຕ່ເຮົາເຮັດຈັ່ງໃດຄວາມຮັກແພງສນິດສນົມຂອງ ຣາຊສີ ກັບ ງົວ ຈຶ່ງຈະແຕກກັນໄດ້."

ອະສຸພາຄຍະ ຕອບ: "ຕ້ອງຄິດອຸບາຍຕື່ສ່ຽວ! ເພິ່ນຍັງວ່າ ຖ້າຈະຂື່ມເອົາດ້ວຍກຳລັງ ແລະ ອຳນາດ ບໍ່ສຳເຣັດແລ້ວ ຕ້ອງໃຊ້ກົນອຸບາຍ ແບບດຽວກັນກັບກາທຳອຸບາຍໃຫ້ງູເຫົ່າຖືກຂ້າຕາຍ" ແລ້ວອະສຸພາຄຍະ ຈຶ່ງເລົ່າຕໍ່ໄປວ່າ:-

## ນິທານແອ້ມທີ ໕

## ເຣື່ອງ ກາ ກັບ ງູເຫົ່າ

ມີສອງກາຜົວເມັຽເຮັດຮັງຢູ່ເທິງຕົ້ນໄມ້, ງູເຫົ່າຕົວນຶ່ງອາໄສຢູ່ໃນ-ໂກນໄມ້ຕົ້ນນັ້ນ, ເວລາໃດ ນາງກາປະໄຂ່ໄວ້ໃນຮັງ ງູເຫົ່າໄປລັກກິນໝົດນາງກາຈຶ່ງຕາຣິບຄວາມທຸກນຳຜົວວ່າ ເຮົາຄວນໜີຈາກຕົ້ນໄມ້ຕົ້ນນີ້ເສັຽ ເພາະວ່າ ຕາບໃດທີ່ງູເຫົ່າຕົວນີ້ຍັງຢູ່ນີ້ ລູກຂອງເຮົາຄົງບໍ່ມີວັນເປັນຕົວເລີຍ ເພາະເພິ່ນວ່າ: ເມັຽຮ້າຍ, ເພື່ອນໃຈຄົດ, ບ່າວຖຽງຄວາມ, ຢູ່ໃນເຮືອນທີ່ມີງູ - ເຫລົ່ານີ້ ແມ່ນມັດຈຸຣາດ(໑) ໂດຍບໍ່ຕ້ອງສົງໄສ.

ກາຕົວຜົວຕອບວ່າ: "ເຣື່ອງທີ່ນີ້ຢ່າພ້າວວາງອາໄລ ເຮົາໄດ້ຮັບໄພ-ຈາກງູຕົວນີ້ມາພໍແຮງແລ້ວ ຄາວນີ້ເຮົາຕ້ອງຈັດການກັບມັນ ເພາະວ່າ:

ຜູ້ໃດມີປັນຍາ ຜູ້ນັ້ນເປັນຜູ້ມີກຳລັງ, ຜູ້ໄຮ້ປັນຍາ ຫລືຈະສູ້ຜູ້ມີປັນຍາໄດ້ດັ່ງຣາຊສີຕົວມີກຳລັງແຕ່ໄຮ້ປັນຍາ ເລີຍຕ້ອງເສັຽປຽບໃຫ້ກະຕ່າຍ."

ບາງກາ ຖາມວ່າ: ເລື່ອງເປັນຢ່າງໃດ?

ກາຕູ້ ບັນຣະຍາຍ:-

ນິທານແລ້ມທີ ໙

## ເຣື່ອງ ຣາຊສີ ກັບ ກະຕ່າຍ

ມີຣາຊສີໂຕນຶ່ງ ເປັນພະຍາຂອງສັດ. ພວກສັດທັງຫລາຍປະຊຸມ-ຕົກລົງກັນປັນຜຽນໄປໃຫ້ຣາຊສີກິນວັນລະໂຕ. ວັນນຶ່ງຖືກຜຽນກະຕ່າຍເຖົ້າ ມັນຈຶ່ງຄຶດຕຶກຕອງວ່າ:

"ຍ້ອນຢ້ານຕາຍຕວ໊າ! ຄືນຈຶ່ງນິບນອບພອບຄານ ບັດນີ້! ເຖິງວາຣະຈະຕ້ອງຕາຍແນ່ແລ້ວ ຈະໄປຢຳແຢງໂຄອົບມັນເຮັດຫຍັງ?" ຄຶດດັ່ງນີ້ແລ້ວ ກໍເຂົ້າໄປຫາຣາຊສີຕາມສະບາຍ ບໍ່ຟ້າວຟັ່ງ ຝ່າຍຣາຊສີຄອຍຖ້າຢູ່ເຫິງ ມີຄວາມຫິວຫລາຍ ພໍເຫັນກະຕ່າຍມາຈຶ່ງນາບວ່າ: "ມຶງໄປອີ້ແອ້ ຢູ່ໃສ ຈຶ່ງມາຊ້າແທ້!"

ກະຕ່າຍ ຕອບວ່າ: "ເມື່ອຂ້າພະເຈົ້າເດີນມາຕາມທາງ ຖືກຣາຊສີອີກໂຕນຶ່ງຄຸມໄວ້ ແລະບັງຄັບໃຫ້ຂ້າພະເຈົ້າສາບານວ່າ ຕ້ອງກັບຄືນໄປ ຂ້າພະເຈົ້າອ້ອນວອນເກືອບຕາຍຈຶ່ງມາໄດ້."

ຣາຊສີຄຽດເປັນໄຟ: "ອ້າຍຮ້າຍນັ້ນ ມັນຢູ່ໃສ? ພາກູໄປເບິ່ງ!" ວ່າແລ້ວກະຕ່າຍກໍພາໄປ ແລ້ວຊີ້ບອກໃຫ້ຣາຊສີເບິ່ງເງົາໂຕເອງອັນສ່ອງຢູ່ໃນຖ້ຳແກ້ວທີ່ເປັນເຫວເລິກ ຣາຊສີຫລຽວລົງໄປເຫັນ ເຂົ້າໃຈວ່າແມ່ນຄູ່-ແຂ່ງຂັນອຳນາດອີກໂຕນຶ່ງຕ່າງຫາກ ມີຄວາມຈອງຫອງ ກໍໂດດລົງໄປໃນ-ຖ້ຳແກ້ວ ເລີຍຕຳຫີນຄິນອີກແຕກຕາຍ.

---

ໝາຍເຫດ: ທ້າ. ໕໐(໑)ມັດຈຸຣາດ: ຄວາມຕາຍ

ກາຕິວຊູ ເວົ້າຕໍ່ໄປວ່າ: "ເຫດດັ່ງນັ້ນ ຂ້າພະເຈົ້າຈຶ່ງວ່າ ຜູ່ມີຍາ ຕ້ອງຕາບແພ້ຜູ່ມີກຳລັງແຕ່ຫາຍາບໍ່ໄດ້." ເວົ້າແລ້ວຈຶ່ງບອກອຸບາຍ ແກ່ເມັຍ ວ່າ: "ຢູ່ໃກ້ຕົ້ນໄມ້ທີ່ເຮົາຢູ່ນີ້ມີນ້ຳສ້າງ ພຣະຣາຊໂອຣົດຂອງກະສັດມາສົງນ້ຳ ສເມີ ແລະມັກຖອດສັງວານຄໍວາງໄວ້ເທິງກ້ອນຫີນ ເຈົ້າຈຶ່ງໄປລັກເອົາສັງ-ວານນັ້ນ ມາໄວ້ທີ່ໂກບງູ." ນາງກາ ເຮັດຕາມຄຳແນະນຳຂອງຜົວ ຝ່າຍງູ ກໍເລີຍຖືກພວກມະຫາດເລັກຂ້າຕາຍໃນເວລາມາຊອກຫາສາຍສັງວານ. ເພາະສະນັ້ນ ຂ້າພະເຈົ້າຈຶ່ງວ່າ "ຖ້າຈະຂືນເອົາດ້ວຍກຳລັງບໍ່ໄດ້ ຕ້ອງໃຊ້ກົນອຸບາຍ" ອະນຸພາຄຍະວ່າ.

ແລ້ວໝາຈອກທັງສອງກໍເຂົ້າໄປຫາຣາຊາປິງຄະລະ ສະແດງຄວາມໂຄຣົບຕາມທຳນຽມແລ້ວ ອະນຸພາຄຍະຈຶ່ງເວົ້າຕໍ່ຣາຊສີວ່າ: "ເທວະ ຂ້າ-ພະເຈົ້າສັງເກດເຫັນເຫດຮ້າຍຢ່າງນຶ່ງອັນໜ້າຢ້ານ ອາດເປັນໄພມາເຖິງພຣະບາດເປັນເຈົ້າໄດ້ ຂ້າພະເຈົ້າຈຶ່ງມາຣາຍງານ ເພາະປະເພນີມີຢູ່ວ່າ: ພຣະຣາຊາເປັນເໝືອນດັ່ງພາຊະນະຮັບໂພຄສຸກ(໑), ມຸນຕີ ເປັນເໝືອນດັ່ງພາ-ຊະນະຮັບຮອງຣາຊກິດ; ເມື່ອຣາຊກິດຂອງພຣະຣາຊາເສັຽຫາຍພາດພັ້ງໄປ ຜູ້ທີ່ຈະໄດ້ຮັບຄວາມຕິຕຽນ ກໍແມ່ນມຸນຕີ; ອີກປະການນຶ່ງ ເປັນບ່າວທ່ານ - ຄວນສະລະຊີວິດຍອມໃຫ້ຕັດຫົວ ດີກວ່າຈະປະວາງໃຫ້ຜູ້ຄິດຄິດທຳຮ້າຍແກ່-ເຈົ້າ ຂອງຕົນ."

ຣາຊາປິງຄະລະ ຖາມ: "ເຣື່ອງອັນໃດກັນ" ອະນຸພາຄຍະວ່າ: "ດຽວນີ້ ອ້າຍນັນທະກະ ສະແດງອາການບໍ່ສົມຄວນຕໍ່ພຣະບາດ ຕໍ່ໜ້າຂ້າພະເຈົ້າ ມັນກໍກ້າກ່າວນິນທາຫຸ້ມສັກດານຸພາບຂອງພຣະບາດ ເຫັນທີມັນບັງອາດ

---

(໑)ສເວີຍຄວາມສຸກ

ຢາກເປັນຣາຊາໃນປ່ານີ້ເປັນແນ່ແທ້ ຂ້າແຕ່ຣາຊາ ການທີ່ພຣະກະສັດຜູ້ທົງອານຸພາບ ມາຖອດຖອນຂ້າເກົ່າຜູ້ຮູ້ຊຳນານໃນຣັຖສາດ(໑)ເສັຽໝົດ ແລ້ວຕັ້ງຄົນໃໝ່ທີ່ມີແຕ່ຄວາມຖແລງແປງລົ້ນໃຫ້ເປັນແທນນັ້ນ ເປັນຄວາມເສັຽຫາຍຢ່າງໃຫຍ່ຫລວງ ອາດພາໃຫ້ປະເທດບ້ານເມືອງຫລົ້ມຈົມໄດ້ ດັ່ງດຽວກັນກັບພຣະຍາເກສະທຸມມະຣາດ."

ຣາຊາປົງຄະລະ ມີຄວາມສົງໃສ ຈຶ່ງຖາມວ່າ"ເຣື່ອງເປັນຢ່າງ-ໃດ?"

ອະນຸພາຄຍະ ບັນຍາຍ:

## ນິທານແຊັມທີ ໗

## ເຣື່ອງ ພຣະຍາເກສະທຸມມະຣາດ

ປາງກ່ອນ ພຣະກະສັດນາມວ່າ ວິທຸມມະຣາດ ສເວີຍສົມບັດຢູ່ໃນປະເທດມະຫາຣັດຖະ ພຣະອົງມີອຳມາດໃຫຍ່ ໕ ຄົນ ເປັນທີ່ປຶກສາຣາຊ-ການ ແລະ ຈັດພຣະຣາຊກິດຕ່າງພຣະອົງ ພຣະຣາຊາວິທຸມມະຣາດມີໂອ-ຣົດອົງນຶ່ງ ນາມວ່າ ເກສະທຸມມະຣາດ ເປັນມະກຸດຣາຊກຸມມານ(໒) ແຕ່ເກສະທຸມມະຣາດ ມີປ່າວໂລ່ເລ ແລະ ສົມພຶຖແລງກິນຢູ່ ໕ ຄົນ.

ຕັ້ງນຶ່ງມີຂ້າເສິກມາຢ່ຳຍີເຂດແດນ ພຣະຍາວິທຸມມະຣາດ ຈຶ່ງຕັດສັ່ງໃຫ້ອຳມາດໃຫຍ່ ໕ ຄົນນັ້ນ ເປັນແມ່ທັບຍົກພົນອອກໄປຂັບໄລ່ສັດຕູ ພໍສົງຄາມສງົບແລ້ວ ພຣະອົງປະທານຄວາມຊອບ ຕັ້ງໃຫ້ອຳມາດທັງ ໕ ຄົນນັ້ນ ເປັນເຈົ້າເມືອງຮັກສາເຂດແດນຣາຊອານາຈັກ.

---

(໑)ແບບແຜນການປົກຄອງປະເທດ (໒)ຜູ້ຈະສເວີຍເມືອງແທນ.

ຝ່າຍບ່າວ ໕ ຄົນຂອງກຸມມານເກສະຫຸມມະຣາດ ເຫັນອຳມາດ ໕ ຄົນ ໄດ້ດີມີຄວາມສຸກ ກໍຄຶດຫຶງສາ ຈຶ່ງຈາກັນເປັນຄວາມລັບ ແລ້ວເຂົ້າໄປຫາເກສະຫຸມມະຣາຊກຸມມານ ທູນວ່າ "ຂ້າແດ່ພຣະກຸມມານ ບັດນີ້ ອຳມາດໃຫຍ່ຂອງພຣະຣາຊບິດາ ໄດ້ຮັບອິສຣິຍະຍົດເປັນອັນມາກ ທັງມີຄວາມສຸກບໍຣິບູນດ້ວຍຊັບສິນບັດນາໆປະການ ຈຶ່ງພາກັນຄິດຫັວຫານບໍ່ໄດ້ມີຄວາມເຊື່ອຟັງນັບຖືແລະຢຳແຢງໃນພຣະອົງຜູ່ເປັນມະກຸດຣາຊກຸມມານເລີຍ ຖ້າບໍ່ເຊື່ອຂໍໃຫ້ພຣະອົງມີໜັງສືສັ່ງໄປໃຫ້ພວກມັນຫາຂອງທີ່ຕ້ອງປະສົງມາຖວາຍລອງເບິ່ງ, ພວກຂ້າພຣະບາດຈະຖືໄປເອງ ເຂົາຈະຈັດໃຫ້ຕາມພຣະປະສົງຫລືບໍ່?"

ພຣະກຸມມານຫລົງເຊື່ອ ຈຶ່ງຂຽນໜັງສືສັ່ງບັງຄັບໃຫ້ອຳມາດທັງ ໕ ຄົນນັ້ນ ຈັດຫາບັນນາການເປັນຕົ້ນ ເງິນຄຳ ແລະສິ່ງຂອງທີ່ຫາຍາກເຂົ້າມາຖວາຍ ແລ້ວມອບໜັງສືໃຫ້ມະຫາດເລັກ ໕ ຄົນນັ້ນຖືໄປ; ມະຫາດເລັກທັງ໕ ຄົນ ໄປເຖິງຂຸນດ່ານແລ້ວ ຈຶ່ງເອົາໜັງສືຂອງພຣະຣາຊກຸມມານມອບໃຫ້ - ພວກຂຸນດ່ານທັງ ໕ ໄດ້ເຫັນດັ່ງນັ້ນ ກໍມີຄວາມຍິນດີຈັດການຕ້ອນຮັບມະຫາດເລັກຂອງພຣະຣາຊກຸມມານເປັນຢ່າງດີ ແລ້ວຈັດຫາບັນນາການຕ່າງໆ ໃຫ້ຕາມປະສົງ ພວກມະຫາດເລັກທັງ ໕ ຄົນນັ້ນ ໄດ້ບັນນາການແລ້ວ ກໍແບ່ງປັນກັນໄປບຳຣຸງຄອບຄົວຂອງໃຜມັນ ບໍ່ທີ່ແຕ່ນັ້ນ ຍັງກັບມາທູນພຣະຣາຊກຸມ-ມານວ່າ "ພວກຂຸນດ່ານທັງ ໕ ຄົນ ບໍ່ໄດ້ຈັດຫາບັນນາການໃຫ້ຕາມປະສົງ-ຈັກຢ່າງ ທັງຍັງດູໝິ່ນດູແຄວນພຣະຣາຊກຸມມານເປັນອັນມາກອີກດ້ວຍ."

ພຣະຣາຊກຸມມານໄດ້ສະດັບຟັງ ກໍມີພຣະໄທອາຄາດພວກຂຸນດ່ານ-ນັ້ນເປັນກຳລັງ ແຕ່ຍັງອົດກັ້ນໄວ້ໄດ້ ເພາະຍັງບໍ່ເຖິງເວລາ ຕໍ່ມາເມື່ອພຣະຣາຊບິດາຕາຍໄປ ພຣະຣາ ຊກຸມມານນັ້ນກໍໄດ້ຂຶ້ນສເວີຍຣາດເປັນພຣະກະ-

ສັດແທນ ຈຶ່ງມີພຣະຣາຊອາຍາສັ່ງປົດຂຸນດ່ານທັງ ໕ ຄົນ ຜູ່ເປັນອາມາດເກົ່ານັ້ນອອກ ເອົາໄປປະຫານຊີວິດເສັຽ ແລ້ວຕັ້ງບ່າວ ໕ ຄົນຂອງຕົນໃຫ້ໄປເປັນຂຸນດ່ານແທນ, ອາມາດໃໝ່ເປັນຄົນໂລເລບໍ່ຮູ້ໃນຫລັກຣັຖສາດ ທຳການປົກຄອງປະຊາຣາດຕາມລຳພັງໃຈ ຈຶ່ງພາໃຫ້ເກີດເດືອດຮ້ອນ ບໍ່ນານພຣະຍາຕຸງຄະພິນ ຜູ່ເປັນສັດຕູເກົ່າໄດ້ຊາບຂ່າວຄວາມເປັນໄປຂອງພວກ-ອາມາດໃໝ່ແຫ່ງພຣະເກສະທຸມມະຣາດ ຈຶ່ງຍົກຣິພົນໂຍທາມາຣົບເອົາ-ເອົາປະເທດມະຫາຣັດຖະໄດ້ຢ່າງງ່າຍດາຍ ສ່ວນພຣະຍາເກສະທຸມມະຣາດລັກອອກໜີຈາກພຣະນະຄອນໄດ້ ກໍຂີ່ມ້າໜີເຂົ້າປ່າໄປແຕ່ອົງດຽວ.

ອະສຸພາຄຍະ ເວົ້າຊ້ຳຄວາມເກົ່າວ່າ: "ເພາະສະນັ້ນຂ້າພະເຈົ້າຈຶ່ງວ່າ ການທີ່ກະສັດຜູ່ທົງອານຸພາບ ມາຖອດຖອນຂ້າເກົ່າຜູ່ຮູ້ຊຳນານໃນ-ຣັຖສາດອອກເສັຽ ແລ້ວຕັ້ງຄົນໃໝ່ຜູ່ບໍ່ມີຄວາມຊຳນານ ເຂົ້າມາແທນນັ້ນເປັນໄພແກ່ສີຣິຣາຊສົມບັດຢ່າງໃຫຍ່ຫລວງ ດັ່ງດຽວກັນກັບພຣະຍາເກສະ-ທຸມມະຣາດ ທີ່ເລົ່າມາ."

ອະສຸພາຄຍະ ເວົ້າຕໍ່ໄປວ່າ: "ຂ້າແຕ່ພຣະຣາຊາ ໃນປະເທດນີ້ກໍມີ–ແຕ່ພຣະບາດເປັນເຈົ້າມີອຳນາດສິດຂາດດີຢູ່ແລ້ວ ບໍ່ຄວນຈະມອບອຳ-ນາດໃຫ້ຜູ່ອື່ນອີກ ບັດນີ້ ພຣະບາດເປັນເຈົ້າມາຖອດຂ້າເກົ່າອອກໝົດ ແຕ່ງຕັ້ງຄົນຕ່າງແດນໃຫ້ເປັນໃຫຍ່ ມີອຳນາດເໜືອພວກເກົ່ານີ້ ບໍ່ຫອນຖືກຕ້ອງ-ຕາມທຳນອງຄອງທັມ ເພາະວ່າ ຜູ່ເປັນໃຫຍ່ ບໍ່ຄວນຊ່ອຍເຫລືອເກືອກູນ-ຄົນຕ່າງປະເທດ ໃຫ້ຍິ່ງກວ່າຄົນພາຍໃນຂອງຕົນ ໂດຍອ້າງວ່າຄົນເກົ່າກະທຳຜິດ ເພາະຜູ່ທີ່ຈະທຳຄວາມເສັຽຫາຍໃຫ້ແກ່ຣາຊສົມບັດໂດຍການໄຂ-ຄວາມລັບໃຫ້ແພ່ງພາຍ ນອກຈາກຄົນ(ຕ່າງເມືອງ)ນັ້ນຫລ້ອ ຈະແມ່ນໃຜ?

ອີກປະການນຶ່ງ ເພິ່ນກ່າວໄວ້ວ່າ: ຜູ່ໃດກໍຕາມທີ່ເຮົາຍັງບໍ່ຮູ້ຈັກຫົວຕີນປາຍ-ນອນ(ຄວາມປະພຶດເປັນໄປຂອງເຂົາ) ຜູ້ນັ້ນບໍ່ຄວນໃຫ້ຢູ່ຮ່ວມເຮືອນ ເມັນຄືກັບຂ້າຕາຍຍ້ອນໃຫ້ເຮືອດມາອາໄສຢູ່ນໍາ."

ຣາຊາປິງຄະລະ ຖາມ: "ເລື່ອງເປັນຢ່າງໃດ?"

ອະສຸພາຄຍະ ເລົ່ານິຍາຍ:

ນິທານແອັນທີ ໘

ເລື່ອງ ເມັນກັບເຮືອດ

ເມັນຕົວນຶ່ງ ຊື່ ອະນະຄະທິບ ອາໄສຢູ່ໃນອາສນາອັນເປັນທີ່ບັນທົມຂອງພຣະຍາໂກສະລະຣາດ ອົງສເວີຍຣາຊສົມບັດຢູ່ໃນນະຄອນໂກສະລະວິ-ໄສ ມັນຄ່ອຍດູດກິນເລືອດຂອງພຣະຍາທຸກໆວັນ ໂດຍພຣະຍາບໍ່ຮູ້ເນື່ອງເພາະປາກມັນອ່ອນ, ວັນນຶ່ງ ມີເຮືອດຕົວນຶ່ງ ຊື່ ຈັນທາລະ ມາຂໍອາໄສຢູ່ນໍາເມັນເພາະຢາກລອງດູດກິນເລືອດພຣະຍາເບິ່ງ ເມັນຈຶ່ງເວົ້າຕໍ່ເຮືອດວ່າ "ກູໃຫ້ມຶງອາໄສຢູ່ນໍາບໍ່ໄດ້ດອກ ເພາະປາກຂອງມຶງແຂງຫລາຍ ຜູ້ທີ່ປາກແຂງຍ່ອມຂົບຜູ້ອື່ນຕາຍ ເໝືອນດັ່ງປູໜີບຄໍນົກຍາງຕາຍສັນນັ້ນ"

ເຮືອດຖາມ: "ເລື່ອງເປັນຢ່າງໃດ?"

ເມັນ ເລົ່ານິທານ:

ນິທານແອັນທີ ໙

ເລື່ອງ ປູ ກັບ ນົກຍາງ

ມີປ່າໃຫຍ່ປ່ານຶ່ງຢູ່ເຂດແຂວງເມືອງມັດຊິມະວິໄສ ທີ່ໃກ້ປ່ານັ້ນ ມີໜອງນຶ່ງ ຊື່ ກັກກຸທະ(໑) ມີໝູ່ປາອາໄສຢູ່ເປັນອັນມາກ ມີນົກຍາງເຖົ້າ

---

(໑)ໜອງກຸນ ....

ຕົວນຶ່ງ ມາເຫັນໜອງນັ້ນມີປາຫລາຍ ກໍບິນແວະລົງໄປປະສົງຈະໄດ້ກິນປາ ສ່ວນພວກປາທັງຫລາຍເຫັນນົກຍາງ ກໍເຕືອນກັນບໍ່ໃຫ້ອອກມາບ່ອນແປນ, ນົກຍາງບໍ່ໄດ້ກິນປາໃນແຊນໜອງທາງດ້ານນີ້ ຈຶ່ງບິນໄປລົງທາງໃໝ່ ແລ້ວທຳອຸບາຍເປັນທຸກຢືນຂາດຽວ ມີນ້ຳຕາໄຫລຍ້ອຍອອກ ແມ່ນເຫັນປານ້ອຍລອຍມາໃກ້ຜ່ານໄປມາຕາມຫວ່າງຂາ ກໍບໍ່ສອບກິນ ປາໃຫຍ່ຕົວນຶ່ງມາເຫັນອາການນົກຍາງເປັນຢ່າງນັ້ນ ຄິດປລາດໃຈຈຶ່ງຮ້ອງຖາມແດ່ໄກວ່າ "ເຫດໃດທ່ານຈຶ່ງມາຢືນໂສກເສົ້າເຫງົາຫງ່ອມຢູ່ບໍ່ກິນອາຫານ"

ນົກຍາງ ຕອບ: "ດູລາປາ ຂໍທ່ານຈຶ່ງຟັງຂ້າພະເຈົ້າກ່ອນ ຂ້າພະເຈົ້ານີ້ແຕ່ເດີມກໍມີປົກກະຕິກິນປາເປັນອາຫານ ບັດນີ້ໄດ້ໄປຮັບສິນມາຈາກທ່ານມຸນີ(໑)ທີ່ຢູ່ໃນປ່າຫິມມະພານ ທ່ານສອນໃຫ້ງົດເວັ້ນການຂ້າສັດເສັຽ ເພາະເປັນບາບ ຂ້າພະເຈົ້າຈຶ່ງໄດ້ງົດເວັ້ນບໍ່ກິນສັດເປັນ ເປັນອາຫານຕັ້ງແຕ່ນັ້ນມາ ປະກອບກັບໄດ້ຮຽນທັມຫລາຍຂໍ້ ຈຶ່ງເປັນຜູ້ມີໃຈກະຣຸນາ ວັນນີ້ ຂ້າພະເຈົ້າມາຈາກອຸດຣະນະຄອນ ໄດ້ຍິນພຣະກະແສຮັບສັ່ງຂອງພຼະຍາເມືອງນັ້ນວ່າ ຈະໃຫ້ພວກພານແຫມາລົງປາທີ່ໜອງກັກກຸທະນີ້ ໃນເວລາບໍ່ນານ ຂ້າພະເຈົ້າໄດ້ຍິນດັ່ງນັ້ນ ມີຄວາມສົງສານພວກສູເປັນອັນມາກ ຈຶ່ງໄດ້ມາບອກ.

ປາທັງຫລາຍໄດ້ຍິນນົກຍາງເວົ້າດັ່ງນັ້ນ ມີຄວາມຕົກໃຈຢ້ານ ຈຶ່ງເວົ້າອ້ອນວອນນົກຍາງວ່າ: "ຂ້າແຕ່ທ່ານນົກຍາງ ຖ້າແມ່ນຈິງຄືຄວາມທ່ານເວົ້າແທ້ ທ່ານຄິດເຫັນຈັ່ງໃດແດ່ໃນການທີ່ຈະຊ່ອຍເຫລືອພວກຂ້າພະເຈົ້າ" ນົກຍາງຕອບວ່າ: "ມີໜອງໃຫຍ່ໜອງນຶ່ງຢູ່ທາງປະເທດທັກສິນາບົດນ້ຳເລິກ

---

(໑)ຣິສີ, ນັກປາດ.

ແລະ ໃສສະອາດດີ ຖ້າພວກທ່ານຍ້າຍໄປຢູ່ໜອງນັ້ນໄດ້ ກໍພົ້ນໄພ"

ປາ ຖາມ: "ເຮັດແນວໃດພວກຂ້າພະເຈົ້າຈິ່ງຈະໄປໄດ້?"

ນົກຍາງ ຕອບ: "ຖ້າພວກທ່ານເຊື່ອໃຈຂ້າພະເຈົ້າຂ້າພະເຈົ້າ ກໍຈະພາໄປ ໂດຍຄາບພວກທ່ານໄປເທື່ອລະໂຕ"

ປາທັງຫລາຍປຶກສາກັນ ຕົກລົງໃຫ້ນົກຍາງພາປາຕົວນຶ່ງໄປເບິ່ງ-ກ່ອນ ຖ້າມີຈິງແທ້ກໍໃຫ້ກັບຄືນມາບອກ ເມື່ອຕົກລົງກັນແລ້ວ ນົກຍາງກໍຄາບປາຕົວນັ້ນພາໄປເຖິງໜອງໃຫຍ່ອັນຢູ່ທາງປະເທດທັກສິນາບົດ ປ່ອຍປາຕົວນັ້ນລົງໄປໃນໜອງໃຫ້ລອຍຫລິ້ນຕາມສະບາຍໃຈແລ້ວພາກັບຄືນມາໜອງເດີມ ປາຕົວນັ້ນກໍບອກເລົ່າແກ່ຝູງປາທັງຫລາຍຕາມທີ່ຕົນໄດ້ໄປເຫັນມາ, ຝູງປາໄດ້ຊາບດັ່ງນັ້ນ ກໍຊອງຊໍກັນເຂົ້ານາຂໍໃຫ້ນົກຍາງພາໄປ ນົກຍາງໄດ້ທີ ຈິ່ງຄາບປາໃນໜອງນັ້ນໄປກິນທີລະຕົວໆຈົນໝົດໜອງ.

ໃນຄັ້ງນັ້ນ ມີປູໃຫຍ່ຕົວນຶ່ງ ຊື່ຈັນທາລະກັກກະຕະ ມັນເຫັນນົກຍາງຄາບປາໄປດັ່ງນັ້ນທຸກວັນ ກໍມີຄວາມສົງໄສຄິດໃນໃຈວ່າ: "ບໍ່ຫລອນວ່ານົກຕົວນີ້ຫລອກເອົາພີ່ນ້ອງຂອງກູໄປກິນໝົດແລ້ວຫລື? ກູລອງໄປເບິ່ງເອງກ່ອນ-ນາ!" ຄິດແລ້ວ ຈິ່ງເຂົ້າໄປຫານົກຍາງ ເວົ້າອ້ອນວອນວ່າ: "ດູລາທ່ານນົກຍາງ ທ່ານຈິ່ງເມດຕາພາຂ້າພະເຈົ້າໄປນຳແດ່" ນົກຍາງເຫັນປູກໍຄິດວ່າ "ປານີ້ກູໄດ້ກິນທຸກວັນໆຈົນເບື່ອແລ້ວສ່ວນປູຍັງບໍ່ທັນໄດ້ລອງເບິ່ງ ວັນນີ້ ກູຈະລອງຊີມອ້າຍປູນີ້ລອງເບິ່ງກ່ອນນາ!" ຄິດແລ້ວກໍຮັບຮອງຈະພາປູໄປ ແຕ່ພໍອ້າປາກຈະຄາບເອົາປູ ປູສລາດຈິ່ງເວົ້າກັບນົກຍາງວ່າ: "ຂ້າພະເຈົ້າລອກຄາບໃໝ່ ຂອງຍັງອ່ອນຢູ່ ເມື່ອທ່ານຄາບແຮງ ຂອງຂ້າພະເຈົ້າກໍຈະແຕກ, ປະການນຶ່ງ ຂ້າພະເຈົ້າຢ້ານທ່ານຄາບບໍ່ໝັ້ນ ແລ້ວຂ້າພະເຈົ້າກໍຈະຕົກຕາຍ,

ສະນັ້ນ-ຂໍທ່ານກະຣຸນາໃຫ້ຂ້າພະເຈົ້າໄດ້ຄາບຄໍທານໄປເຖີ້ນ" ນົກຍາງບໍ່ຮູ້ກົນອຸບາຍຂອງປູກໍຍອມໃຫ້ປູຄາບຄໍແລ້ວພາບິນໄປ ເຖິງບ່ອນທີ່ຕົນເຄີຍເຊົາກິນປາກໍພາປູແວະລົງ ປູແລເຫັນກ້າງປາເຕັມຢູ່ໃນທີ່ນັ້ນ ກໍຮູ້ໄດ້ທັນທີວ່ານົກຍາງພາປາມາກິນໃນທີ່ນີ້ ຈຶ່ງໜີບຄໍນົກຍາງໃຫ້ແໜ້ນເຂົ້າແລ້ວຂນາບນົກຍາງວ່າ: "ມຶງຈຶ່ງພາກູຄືນໄປໜອງເກົ່າຂອງກູດຽວນີ້ ກູຈຶ່ງຈະວາງຄໍມຶງ ບໍ່ດັ່ງນັ້ນ ກູກັບມຶງຕ້ອງຕາຍນຳກັນ" ນົກຍາງເຈັບຫລາຍ ຈຶ່ງພາປູບິນກັບຄືນໄປພໍເຖິງໜອງ ປູກໍໜີບຄໍນົກຍາງຂາດຕາຍກັບບ່ອນ.

ເພາະສະນັ້ນ ຂ້າພະເຈົ້າ(ເມັນເວົ້າ)ຈຶ່ງວ່າ "ຜູ້ທີ່ປາກແຂງ-ຍ່ອມຂົບຜູ້ອື່ນຕາຍ" ເຫດດັ່ງນັ້ນ ຂ້າພະເຈົ້າຈຶ່ງໃຫ້ທ່ານອາໄສຢູ່ນຳບໍ່ໄດ້.

ເລືອດໄຫວ້ວອນ: "ເຖິງແມ່ນປາກຂອງຂ້າພະເຈົ້າກ້າແຂງກໍຈະບໍ່ທຳໃຫ້ທ່ານຕ້ອງເດືອດຮ້ອນ ເພາະຜູ້ທີ່ເຂົ້າໄປອາໄສເຂົາ ແລ້ວທຳໃຫ້-ເຂົາເດືອດຮ້ອນນັ້ນ ເປັນຄົນຊົ່ວຮ້າຍທີ່ສຸດ"

ເມື່ອເມັນຍິນຍອມໃຫ້ເລືອດອາໄສຢູ່ນຳແລ້ວ ໃນຄືນນຶ່ງ ພຣະຍາກຳລັງບັນທົມຫລັບ ເລືອດອົດບໍ່ໄດ້ກໍອອກມາຂົບກິນເລືອດພຣະຍາ ພຣະຍາຕື່ນຂຶ້ນໃຕ້ໄຟລ່ອງຫາບໍ່ເຫັນເລືອດ ເຫັນແຕ່ເມັນ ເພາະໜີບໍ່ທັນ ພຣະຍາເຂົ້າໃຈວ່າເມັນຂົບ ກໍຂ້າເສັຽ ສ່ວນເລືອດໜີໄປໄດ້.

ອະນຸພາຄຍະ ເລົ່ານິທານອັນນີ້ໃຫ້ອາຊຸລີຟັງແລ້ວ ຈຶ່ງກ່າວສໂລກນີ້ວ່າ:

"ຜູ້ໃດ ເມື່ອຍັງບໍ່ຮູ້ຈັກຄວາມປະພຶດຂອງເຂົາແລ້ວ ແລະ ໃຫ້ເຂົາຄົນອື່ນມາອາໄສ ຜູ້ນັ້ນ ກໍຄົງບໍ່ພົ້ນຈາກຄວາມຕາຍ ດັ່ງດຽວກັນກັບເມັນນັ້ນຕາຍຍ້ອນເລືອດ ຊື່ຈັນທາລະ ສະນັ້ນ"

ອະສຸພາຄຍະ ເວົ້າຕໍ່ໄປວ່າ: "ບັດນີ້ ພຣະບາດເປັນເຈົ້າ ໃຫ້ນັນ-ທະກະ ຜູ້ທີ່ເຮົາບໍ່ຮູ້ຈັກຫົວນອນປ່າຍຕີນ ເຂົ້າມາອາໄສຢູ່ນຳ ບໍ່ໜ້າຍັງຕັ້ງ ໃຫ້ມີຍົດສັກສູງດ້ວຍ ອັນນີ້ເປັນໄພຢ່າງມະຫັນ(໑) ເພາະມັນຈະຕ້ອງທຳຮ້າຍຕໍ່ພຼະບາດເປັນເຈົ້າໃນວັນໃດວັນນຶ່ງ ເມື່ອຂ້າພະເຈົ້າໄດ້ບອກໃຫ້ຮູ້ຣະວັງຕົວດັ່ງນີ້ ຫາກຍັງບໍ່ເຊື່ອຟັງ ພາຍຫລັງມາ ຈະມາຕູ່ອານາດບໍ່ໄດ້"

ຣາຊາປີງຄະລະ ຄິດໃນໃຈວ່າ: "ພຽງແຕ່ໄດ້ຟັງຄຳຫາຂອງຝ່າຍ-ດຽວ ບໍ່ຄວນທຳໂທດຜູ້ອື່ນ ເມື່ອໄດ້ສືບສວນເຫັນຈິງແລ້ວ ຈຶ່ງຄວນທຳໂທດຫລືຍ້ອງຍໍ" ຄິດແລ້ວ ຈຶ່ງຫັນມາເວົ້ານຳອະສຸພາຄຍະວ່າ: "ຖ້າເຮົາຈະກ່າວ-ເຕືອນໃຫ້ນັນທະກະຮູ້ເນື້ອ ແລະປ່ຽນໃຈໃໝ່ເສັຽ ຈະບໍ່ດີຫລື?"

ອະສຸພາຄຍະ ພ້າວຄັດຄ້ານວ່າ: "ບໍ່ຄວນເລີຍ! ບໍ່ຄວນເລີຍ! ເພາະຈະທຳຄວາມລັບໃຫ້ແຕກກະຈາຍອອກ ຄວາມລັບເປັນຂອງແພງ ຕ້ອງຮັກສາໃຫ້ແຈບ ຢ່າໃຫ້ຟັ້ງຟື່ວໄດ້ ຖ້າຟັ້ງຟື່ວແລ້ວກໍຈະບໍ່ມີຜົນປະການໃດ ອັນຜູ້ຈະທຳທຸຣະຢ່າງໃດຢ່າງນຶ່ງ ຖ້າບໍ່ພ້າວທຳໃຫ້ທັນກັບເຫດການແລ້ວ ເວລາກໍຈະກີນກີນທຸຣະຂອງຜູ້ນັ້ນເສັຽ"

ຣາຊສີ ເວົ້າ: "ຈັ່ງໃດກໍ່ຊ່າງ ເຮົາຕ້ອງພິຈາຣະນາໃຫ້ຮູ້ເສັຽ-ກ່ອນວ່າ ງົວນັນທະກະມັນຈະມີອຳນາດ ແລະ ກຳລັງພໍຈະທຳອັນຕະຣາຍໃຫ້ເຮົາໄດ້ພໍປານໃດ?"

ອະສຸພາຄຍະ ຕອບວ່າ:"ເທວະ ນອກຈາກເບິ່ງສະພາບຮ່າງກາຍ ແລະ ສິ່ງທີ່ກ່ຽວກັບຮ່າງກາຍແລ້ວ ຈະຄາດຄະເນກຳລັງ ແລະ ຄວາມສາ-ມາດອັນແທ້ຈິງບໍ່ໄດ້ດອກ ໃຫ້ເບິ່ງແຕ່ນ້ຳມະຫາສມຸດຍັງສູ້ນົກແຕບແຕ້ບໍ່ໄດ້"

---

(໑)ມະຫັນຕ໌ : ໃຫຽ່.

ອາຊີ ຖາມ: "ເລື່ອງເປັນຢ່າງໃດ?"

ນະລຸພາຄຍະ ບັນຣະຍາຍ:-

## ນິທານແອັນທີ ໑໐

## ເລື່ອງ ນົກແຕບແຕ້ ກັບ ນ້ຳສມຸດ

ນົກແຕບແຕ້ຕົວເມັຽ ອາໄສຫາກິນຢູ່ແຄມຝັ່ງສມຸດ ຕົວຜູ້ຊື່ ອຸດຕາ-ນະປາຕະ ຕົວເມັຽຊື່ ປິຍະວາທະ ເມື່ອເວລານາງນົກມີໄຂ່ຈຶ່ງເອີ້ນບໍ ຜົວວ່າ: "ທ່ານສາມີ ບັດນີ້ທ້ອງຂ້າພະເຈົ້າແກ່ແລ້ວ ຈະໃຫ້ໄຂ່ໃສ່ບ່ອນໃດ?" ນົກຜົວຕອບວ່າ: "ຫາດຊາຍນັ້ນງາມດີ ແລະ ເໝາະສົມ ຈຶ່ງໄຂ່ໃສ່ທີ່ນັ້ນເຖີດ" ນົກເມັຽຕອບວ່າ: "ບ່ອນນັ້ນສມຸດຂຶ້ນມາຖ້ວມເຖິງ ເມື່ອຟອງນ້ຳມານັ້ນຈະບໍ່ພັດເອົາລູກເຮົາໄປໝົດຫລື?" ນົກຜົວຂຶ້ນສຽງດັງ: "ນີ້ເຫັນວ່າ ຂ້າພະເຈົ້າບໍ່ມີກຳລັງພໍຈະສູ້ກັບນ້ຳສມຸດໄດ້ຫລື? ເອີຍ! ນາງ! ຕາບໃດທີ່ຂ້າພະເຈົ້າຍັງຢູ່ ນາງບໍ່ຕ້ອງຕົກໃຈ ນ້ຳສມຸດຈະທຳອັນໃດແກ່-ເຮົາໄດ້ ຈຶ່ງໄປໄຂ່ທີ່ນັ້ນເຖີ້ນ."

ນົກຕົວເມັຽເຊື່ອຄວາມຜົວ ກໍໄປໄຂ່ໃສ່ຫາດ ຝ່າຍນ້ຳສມຸດໄດ້ຍິນນົກອຸດຕານະປາຕະ ເວົ້າສະຫາວດັ່ງນັ້ນ ກໍຢາກຈະລອງດີ ຈຶ່ງບັນດານໃຫ້ຟອງນ້ຳມາພັດເອົາໄຂ່ນົກໄປໝົດ, ນາງນົກມີຄວາມເສັຽໃຈ ຮ້ອງໄຫ້ຮ່ຳໄຮນຳລູກເປັນອັນມາກ ແລ້ວເອີ້ນບໍຜົວວ່າ: "ທ່ານຜູ້ເປັນທີ່ເພິ່ງເອີຍ! ບັດນີ້ ນ້ຳສມຸດພັດເອົາໄຂ່ເຮົາໄປແລ້ວ! ເຈົ້າຈຶ່ງທຳໃຫ້ນ້ຳສມຸດຢ້ານ ສົ່ງລູກເຮົາຄືນມາເຖີ້ນ" ນົກຜົວຮັບຮອງວ່າ: "ຂ້າພະເຈົ້າຈະນຳເອົາລູກຄືນມາໃຫ້ໄດ້ ຖ້າບໍ່ໄດ້ ຂໍໃຫ້ຂ້າພະເຈົ້າຕົກນາຮົກ ດັ່ງດຽວກັບນາຍພານປ່າຜູ້ຂ້າແມ່ລິງກິນ ນັ້ນເຖີ້ນ."

ນົກເນັ້ງ ຖາມວ່າ: "ນິຍາຍເປັນດັ່ງລືໃ"

ນົກຕືດ ເລົ່ານິຍາຍ:-

ນິທານແອ້ນທີ ໑໑

ເຣື່ອງ ນາຍພານ ກັບ ລິງ

ມີປ່າໃຫຍ່ແຫ່ງນຶ່ງ ຢູ່ໃນຂົງເຂດນະຄອນກັສມີຣະ ພານເນື້ອຄົນນຶ່ງ ໃນນະຄອນກັສມີຣະ ມັກອອກໄປຫາຍິງເນື້ອໃນປ່ານັ້ນສເມີ ວັນນຶ່ງກໍລັງນາຍພານຍ່າງອອກຫາຍິງເນື້ອຢູ່ກາງປ່າ ກໍຈອບເສືອໂຄ່ງໃຫຍ່ເຂົ້າຍ່າງຈໍຈັບ, ຈຶ່ງປົດຂຶ້ນຕົ້ນໄຣໃຫຍ່ ແຕ່ມີຄວ້າໄສ່ງ່າເຄົ້າບໍ່ເຖິງ ທັນໃດນັ້ນ ແມ່ລິງຕົວນຶ່ງຢູ່ເທິງຕົ້ນໄມ້ໄຣນັ້ນ ເຫັນນາຍພານກໍລັງປີນຂຶ້ນຕົ້ນໄມ້ ເພາະຢ້ານເສືອກິນ ມີຄວາມສົງສານ ຈຶ່ງພ້າວມາດຶງແຂນນາຍພານຂຶ້ນໄປ, ເສືອແລ່ນມາເຖິງຕົ້ນໄຣ ແຫນພ້າຂຶ້ນໄປເຫັນລິງຈັບແຂນນາຍພານໄວ້ ຈຶ່ງເວົ້າກັບລິງວ່າ:

ເອີຍ! ລິງ, ວາງອ້າຍຄົນຊື່ວນີ້ລົງມາໃຫ້ກູກິນສັງດີກວ່າ ເພາະທັມມະດາຄົນ ຍ່ອມເປັນສັດຕູຂອງພວກເຮົາ ບຽດບຽນສັງຫານພວກເຮົາກິນສເມີ ສ່ວນພວກເຮົາເປັນສັດປ່ານໍາກັນ ຄວນຮັກແພງກັນ ອ້າຍຄົນມັນບໍ່ຢູ່ປ່ານໍາເຮົາດອກ."

ລິງຕອບເສືອວ່າ: "ເອີຍເສືອ ຄົນຜູ້ນີ້ມັນໜີຕາຍມາເພິ່ງກູ, ກູຈະວາງໃຫ້ມຶງກິນບໍ່ໄດ້ ເພາະເພີ່ນວ່າ:

ຄວນຊ່ອຍເຫລືອຄົນທີ່ປະສົບໄພ ເຊິ່ງພ້າຫລ່າເຂົ້ານາຫາ ແມ່ນຈະເປັນສັດຕູກໍຕາມ: ອັນວ່າຕົ້ນພືກສາ ກໍຍັງຍອມໃຫ້ຄົນຜູ້ມາຕັດ ຊົນເງົາຮົ່ມ-ຂອງຕົນ"

ເສືອຕອບລິງວ່າ: "ລິງເອີຍ! ມຶງບໍ່ ຕ້ອງໄປທໍາຄຸນກັບຜູ້ເປັນ..

ສັນຍະຊາດພານດອກ ຊາດຄົນພານນັ້ນຈະຮູ້ຈັກຄຸນຄົນຢ່າງໃດ ຖ້າມຶງບໍ່ຟັງຄວາມກູ ຈຶ່ງຖ້າເບິ່ງ ໄປພານໜ້ານັ້ນຈະຕ້ອງທຳອັນຕະລາຍແກ່ມຶງແນ່ນອນ ດັ່ງດຽວກັນກັບຊ່າງຄຳ ທີ່ໄດ້ທຳອັນຕະລາຍໃຫ້ແກ່ພານຜູ້ຊື່ວ່າ ຍັນຍະພານ ສັນນັ້ນ"

ລີງ ຖາມ: "ນິຍາຍເປັນຢ່າງໃດ?"

ເສືອເລົ່ານິທານ:

## ນິທານແຊ້ມທີ ໑໒

## ເລື່ອງຊ່າງຄຳ ກັບ ພານ

ພານຜູ້ນຶ່ງ ຊື່ ຍັນຍະພານ ຢູ່ບ້ານພິນນາກະຄາມ ໃກ້ຝັ່ງແມ່ນ້ຳພິນນາກະ ສໄມນຶ່ງ ຍັນຍະພານອອກຈາກບ້ານເດີນທາງໄປເມືອງພາຣາ-ນະສີ ພໍໄປເຖິງກາງປ່າໃຫຍ່ທີ່ກັນດານ ພານມີຄວາມຢາກນ້ຳ ຈຶ່ງໄປຊອກຫານ້ຳກິນ, ໄດ້ພົບສ້າງໃຫຍ່ ແລະ ເລິກ ໜ່ອຍນຶ່ງໃນປ່ານັ້ນ ຈຶ່ງຕັດເອົາເຄືອເຂົາມັດນ້ຳເຕົ້າຢ່ອນລົງໄປເພື່ອຕັກນ້ຳ; ໃນສ້າງນັ້ນ ມີສັດສີ່ຈຳພວກຕົກຢູ່ດ້ວຍເວນກັມຂອງເຂົາ ຄື: ເສືອ, ລີງ, ງູເຫົ່າ ແລະ ຊ່າງຄຳ ພໍພານຢ່ອນເຄືອເຂົາລົງໄປ ລີງຈັບເຄືອເຂົາໄດ້ກໍໄຕ່ຂຶ້ນມານຳເຄືອເຂົາຈຶ່ງໂດດອອກຈາກສ້າງໄດ້ ແລ້ວເວົ້າກັບພານວ່າ: "ທ່ານຜູ້ຈເຣີນ ຂ້າພະ-ເຈົ້າມີຊີວິດລອດຕາຍມາໄດ້ໃນຄາວນີ້ ກໍຍ້ອນບຸນຄຸນຂອງທ່ານ ຂ້າພະເຈົ້າຈະບໍ່ລືມບຸນຄຸນຂອງທ່ານເລີຍ; ທີ່ຢູ່ຂອງຂ້າພະເຈົ້າຢູ່ໃນພຣະຣາຊອຸທຍານແຫ່ງນະຄູຣະນະຄອນ ເວລາໃດທ່ານໄດ້ເດີນທາງໄປທີ່ເມືອງນັ້ນ ກະຣຸນາໄດ້ໄປຢາມຂ້າພະເຈົ້າດ້ວຍ ແລະ ຂ້າພະເຈົ້າຂໍບອກໃຫ້ທ່ານຊາບວ່າ ໃນສ້າງທີ່ຂ້າພະເຈົ້າຕົກນັ້ນ ຍັງມີສັດອີກ ໓ ຕົວເຫລືອຢູ່ຄື: ເສືອ, ລີງ ແລະ

ຄົນ ທ່ານຈຶ່ງໄດ້ເອົາເສືອແລະງູອອກດ້ວຍ ສ່ວນຄົນນັ້ນຢ່າເອົາອອກເລີຍ" ວ່າທີ່ນີ້ແລ້ວ ລີງກໍລາພານໜີໄປ.

ລີງໄປແລ້ວ ພານກໍຢ່ອນເຊືອກເຄືອເອົາລີງໄປໃນສ້າງອີກ ທັນໃດນັ້ນ ເສືອກໍຈັບເຊືອກຈ່ອງຂຶ້ນມາໄດ້ ແລ້ວເວົ້າຕໍ່ພານວ່າ: "ທ່ານຜູ້ຈະເຣີນ ບຸນຄຸນຂອງທ່ານນີ້ເຫລືອລົ້ນ ໃນການທີ່ໄດ້ຊ່ອຍຂ້າພະເຈົ້າໃຫ້ລອດຕາຍຄາວນີ້ ຂ້າພະເຈົ້າຢູ່ປ່າກາລີກາວັນ ໃກ້ນະຄອນນະຄູຣະພຸນ ເມື່ອທ່ານໄດ້ໄປທາງນັ້ນ ກະຣຸນາແວະຢາມຂ້າພະເຈົ້າດ້ວຍ ຂ້າພະເຈົ້າຈະໄດ້ຕອບບຸນແທນຄຸນ ວ່າແລ້ວເສືອກໍລາໜີໄປ. ພານຢ່ອນເຊືອກລົງເທື່ອທີ ໓ ງູກໍກ້ຽວແລະຂຶ້ນມາໄດ້ ແລ້ວເວົ້ານຳພານວ່າ: "ຂ້າພະເຈົ້າ ຊື່ ຍຸປະພາ ອາໄສຢູ່ມິນ-ດິບ(໑)ໃນວັດນຶ່ງທີ່ຢູ່ໃນເມືອງນະຄູຣະ ຖ້າທ່ານໄດ້ໄປເມືອງນັ້ນຈຶ່ງໄປຢາມຂ້າພະເຈົ້າດ້ວຍ ຂ້າພະເຈົ້າຈະໄດ້ຕອບແທນຄຸນ, ງູເທົ່າເວົ້າຕໍ່ໄປວ່າ ໃນສ້າງນີ້ຍັງມີຄົນຜູ້ນຶ່ງເຫລືອຢູ່ ທ່ານຢ່າເອົາມັນອອກເລີຍ ເພາະມັນເປັນຄົນບໍ່ດີ:"ວ່າທີ່ນັ້ນແລ້ວກໍລາໜີໄປ.

ຝ່າຍພານ ໄດ້ຍິນຄຳຂອງສັດທັງສາມໄດ້ຫ້າມບໍ່ໃຫ້ເອົາຄົນອອກດັ່ງນັ້ນ ກໍຄຶດໃນໃຈວ່າ "ສັດເດັຽຣະສານ ກໍຍັງປານີເອົາອອກ ເປັນຊາດຄົນ-ແທ້ໆ ບໍ່ເອົາອອກຈະຄວນຫລື? ຈະຟັງແຕ່ຄວາມຂອງສັດທັງສາມນັ້ນ ເຫັນບໍ່ເປັນການ" ຄຶດແລ້ວຈຶ່ງຢ່ອນເຊືອກລົງດຶງຊ່າງຄຳຂຶ້ນມາ ຊ່າງຄຳທຳຄວາມໂຄຣົບແກ່ພານແລ້ວ ບອກວ່າ "ຂ້າພະເຈົ້າເປັນຊ່າງຄຳ ຢູ່ບ້ານໃກ້ທາດຸຫລວງ ໃນນະຄອນນະຄູຣະ ຖ້າທ່ານໄດ້ໄປໃນເມືອງນັ້ນ ໂຜດໄດ້ໄປຢາມຂ້າພະເຈົ້າດ້ວຍ ເພື່ອຈະໄດ້ຕອບແທນຄຸນ" ວ່າແລ້ວຊ່າງຄຳກໍລາໜີໄປ.

---

(໑)ມິນດິບ : ຫໍນ້ອຍ, ຫໍຜີ.

ສ່ວນພານອາບນ້ຳກິນນ້ຳລະບາຍແລ້ວ ກໍເດີນທາງຕໍ່ໄປຈົນເຖິງ-ເມືອງພາຣານະສີ ທຳກິດຊຳຣະລ້າງບາບຕາມພິທີແລ້ວກໍກັບຄືນ ຂາກັບມາພານຄິດຢາກໄປຢາມສັດທັງ ໓ ຈຳພວກ ຕາມທີ່ສັ່ງໄວ້ ຈຶ່ງແວະໄປທາງເມືອງນະຄຸຣະ ເຂົ້າໄປໃນອຸທຍານ ລິງຕົວນັ້ນເຫັນພານມາ ກໍດີໃຈຈັດຫາໝາກໄມ້ນາໆຊະນິດມາລ້ຽງພານຕາມຖານະ ພໍສົມຄວນແລ້ວກໍລາລິງ ແລ້ວໄປຢາມເສືອທີ່ຢູ່ປ່າກາລີກາວັນ ເສືອມີຄວາມຍິນດີຈຶ່ງເອົາເຄື່ອງສັງວານ-ຄຳ ອັນເປັນຂອງພຣະຣາຊກຸມມານທີ່ມັນໄດ້ກິນນັ້ນມາມອບໃຫ້ພານ ເພື່ອຕອບແທນຄຸນ ພານໄດ້ເຄື່ອງສັງວານຄຳນັ້ນແລ້ວ ກໍລາຈາກເສືອໄປ ຂນະເດີນມານຳທາງ ໄດ້ຄຶດຮ່ຳຮອນວ່າ: "ເຄື່ອງສັງວານນີ້ເປັນຂອງກະສັດ, ມີຄ່າຫລາຍ ບໍ່ຄວນທີ່ຈະເອົາອອກເອ້ຍ້ອງ ຄວນຈະຫລໍ່ຫລອມໄວ້ ໃຫ້ເປັນຂອງມູນມັງຕໍ່ໄປ" ຄຶດດັ່ງນີ້ແລ້ວ ກໍຄຶດເຫັນລະຫາຍຊ່າງຄຳຜູ້ທີ່ຕົນໄດ້ຊ່ອຍເຫລືອມາແຕ່ກ່ອນ ຈຶ່ງເບັດໜ້າໄປຫາຊ່າງຄຳ ເພື່ອໃຫ້ຊ່າງຄຳຫລໍ່ຫຼອມໃຫ້.

ຊ່າງຄຳໄດ້ເຫັນສາຍສັງວານນັ້ນ ກໍຈື່ໄດ້ທັນທີວ່າ ເປັນສາຍສັງ-ວານຄຳຂອງພຣະຣາຊກຸມມານອົງທີ່ຖືກເສືອຂົບຕາຍ ເພາະເປັນສີມືຂອງເຂົາເອງ ທັນທີນັ້ນ ຄວາມຄຶດໂລບ ແລະ ຫິງສາ ກໍເກີດຂຶ້ນໃນສັນດານ-ຂອງຊ່າງຄຳ ມັນຮຳເພິງວ່າ: "ເວລາກູຕົກລ້າງ ໄດ້ຮັບຄວາມຍາກແຄ້ນແສນສາຫັດ ພານຄົນນີ້ບໍ່ໄດ້ເອົາກູອອກກ່ອນ ມັນກັບໄປເອົາສັດເດັຽຣະ-ສານ ອັນບໍ່ແມ່ນເຊື້ອຊາດດຽວກັນອອກກ່ອນ ມັນຖືຖືກູແຄ່ວນກູຜູ້ເປັນມະ-ນຸດດັ່ງດຽວກັນ ບັດນີ້ກູຈະຕ້ອງທຳໃຫ້ມັນຮູ້ຈັກຄວາມເປັນມະນຸດຂອງກູເສັຽກ່ອນ" ຄຶດແລ້ວກໍບອກພານໃຫ້ຄອຍຖ້າຢູ່ເຮືອນ ສ່ວນຊ່າງຄຳຜູ້ອາທັນນັ້ນ

ຮີບນຳຄວາມໄປທູນພຣະກະສັດວ່າ: "ຂໍທານໂທດ ເຣື່ອງທີ່ວ່າເສືອຂົບພຣະຣາຊໂອຣົດຕາຍນັ້ນ ບໍ່ແມ່ນສາແລ້ວ ຄວາມຈິງຂ້າພຣະບາດສືບສວນແລະໄດ້ຄວາມແນ່ ແມ່ນໂຈນຄົນນຶ່ງເປັນຜູ້ຂ້າພຣະຣາຊກຸມມານ ແລ້ວມັນທຳອຸບາຍ-ເອົາສົບໄປຖິ້ມໄວ້ໃນປ່າ ເວລານີ້ໂຈນຄົນນັ້ນໄດ້ເອົາສາຍສັງວານຂອງພຣະຣາຊກຸມມານມາໃຫ້ຂ້າພຣະບາດຫລໍ່ຫລອມໃໝ່ເພື່ອທຳລາຍຮູບພັນເດີມ ຂ້າພຣະບາດໄດ້ອຸບາຍໃຫ້ມັນຖ້າຢູ່ເຮືອນຂອງຂ້າພຣະບາດແລ້ວ ຂໍໃຫ້ສັ່ງຣາຊບຸຣຸດໄປຈັບເອົາຕົວມາ"

ພຣະຣາຊາໄດ້ສະດັບພ້ອມທັງມີພຣະໄທຄິດເຖິງພຣະຣາຊກຸມມານເປັນອັນມາກກໍໃຫ້ຣາຊບຸຣຸດ(໑)ໄປຈັບພານຄົນນັ້ນມາພ້ອມດ້ວຍສາຍສັງວານແລ້ວກໍຕັດຖາມພານວ່າ: "ພານ! ມຶງໄດ້ສາຍສັງວານນີ້ມາແຕ່ໃສ?" ພານທູນວ່າ: "ຂໍທານໂທດ ໄດ້ມາຈາກເສືອ ເສືອໄດ້ມອບສັງວານນີ້ໃຫ້ແກ່ຂ້າ-ພຣະບາດ"

ພຣະຣາຊາບໍ່ທົງພິຈາຣະນາໃຫ້ຖ້ວນຖີ່ ຫລົງເຊື່ອຕາມຄຳພາງຂອງຊ່າງຄຳ ຈຶ່ງທົງພຣະຣາຊອາດຍາວ່າ: "ອ້າຍໂຈນ! ເສືອສາງທີ່ໃດຈະມີ-ສາຍສັງວານ ມຶງແຫລະເປັນໂຈນຂ້າພຣະຣາຊໂອຣົດຂອງກູ ເຮີຍ! ຣາຊບຸຣຸດ ຈົ່ງເອົາໂຈນນີ້ໄປປະຫານເສັຽ" ທັນທີນັ້ນພວກຣາຊບຸຣຸຍກໍຄຸມເອົາພານ-ໄປສູ່ທີ່ປະຫານ ເວລາກຳລັງຖືກຄຸມໄປ ພານໄດ້ກ່າວສໂລກນີ້ຂຶ້ນວ່າ"ຄຳໃດອັນເສືອ ລີງ ແລະ ງູ ຫາກບອກກູໃນວັນນັ້ນ ກູບໍ່ຟັງລ່ວງເກີນຄຳຂອງເຂົາເສັຽ ຈຶ່ງຖືກຄົນຖ່ອຍຫລອກລວງໄດ້."

ໃນເວລາຖືກຄຸມຕົວໄປນັ້ນ ພວກຣາຊບຸຣຸດໄດ້ພາເອົາພານ-ກາຍມາ

---

(໑)ຄົນໃຊ້ຂອງພຣະຣາຊາ, ຕຳຣວຈ.

ທາງທີ່ນິນດິບບ່ອນງູຕົວທີ່ພານໄດ້ຊ່ອຍເຫລືອນັ້ນຢູ່, ງູເຫັນພານໄດ້ຮັບຄວາມຮ້າຍເຖິງຂນາດ ມີຄວາມສົງສານ ຈຶ່ງຄຶດວ່າ: "ເຖິງຄາວແລ້ວທີ່ກູຈະໄດ້ຕອບແທນບຸນຄຸນຂອງທ່ານຜູ້ມີຄຸນ" ຄຶດດັ່ງນີ້ແລ້ວ ງູກໍອອກຈາກນິນດິບແລ່ນລັດຂຶ້ນຫາລາດພຣະຣາຊາ ລີ້ວເຂົ້າຕອດພຣະຣາຊບຸດຕີຂອງພຣະກະສັດ ທີ່ກຳລັງເປັນສາວງາມເຕັມຕົວດຸຈດັ່ງດອກບົວທີ່ກຳລັງບານ ໃຫ້ລົ້ມລົງຕໍ່ໜ້າພຣະຣາຊບິດາ ແລ້ວຟ້າວລັບລີ້ໜີໄປດ້ວຍກຳລັງຣິດ ພຣະຣາຊບິດາຕົກພຣະໄທ ຈຶ່ງໃຫ້ໄປນຳໝໍງູມາປິ່ນປົວຕັ້ງຫລາຍໝໍ ພິດງູກໍບໍ່ສ່ວງຫາຍ ດ້ວຍອຳນາດຈິດກະຕັນຍູ ງູໄດ້ອະທິຖານໄຫວ້ຂໍໃຫ້ນາງອອກປາກເວົ້າວ່າ: "ໝໍອື່ນທັງຫລາຍຈະມາປິ່ນປົວພິດງູຕົວນີ້ ໃຫ້ສ່ວງຫາຍບໍ່ໄດ້ ເວັ້ນໄວ້ແຕ່ພານຄົນທີ່ຣາຊບຸຣຸດຄຸມເອົາຕົວໄປປະຫານ"

ພຣະຣາຊາໄດ້ຫົງສະດັບຄຳສູນອອກປາກຂອງນາງດັ່ງນັ້ນ ຈຶ່ງໃຫ້ຣາຊບຸຣຸດຄົນນຶ່ງຟ້າວແລ່ນໄປນຳພານຄືນມາ ພໍກາຍມາທາງນິນດິບ ງູໄດ້ເອີ້ນບອກພານຕາມພາສາງູທີ່ຄົນອື່ນບໍ່ສາມາດຮູ້ນຳໄດ້ວ່າ: "ທ່ານພານຜູ້ມີຄຸນ ທ່ານຈຶ່ງເປົ່າພິດຂອງເຮົາໃຫ້ສ່ວງຫາຍຕາມໃຈເຖີດ".

ພານຂຶ້ນໄປຖວາຍບັງຄົມພຣະຣາຊາແລ້ວ ຈຶ່ງກົ້ມລົງເປົ່າລູກສາວພຣະຍາ: "ອິມຄຸຣຸງມະຫາຄຸຣຸ ທຸນລູສິວະຫາຍະ ຜົ່ງ!" ທັນໃດນັ້ນ ພິດງູກໍສ່ວງຫາຍປານປິດຖິ້ມ ພຣະຣາຊກຸມມາຣີລຸກນັ່ງໄດ້ທັນທີ ແລະມີອາການເໝືອນບໍ່ມີແນວໃດເກີດຂຶ້ນ ພຣະຣາຊາຫົງພໍພຣະໄທ ຈຶ່ງພຣະຣາຊທານຊັບສົມບັດແລະຍົດສັກບໍຣິວານແກ່ພານເປັນອັນມາກ ພານໄດ້ຮັບອິສຣິຍະຍົດ(໑)ອັນຍິ່ງໃຫຍ່ ເພາະການທຳຄຸນພຽງເລັກນ້ອຍ ຈຶ່ງກ່າວສໂລກນີ້ວ່າ:

"ການທຳຄຸນໃຫ້ມະນຸດ(ຜູ້ອະກະຕັນຍູ ດັ່ງຊ່າງຄຳ) ບໍ່ມີປໂຍດ

---

(໑) ອິສສິຍະຍົດ : ຄວາມເປັນໃຫຍ່

ອັນໃດເລີຍ ສູ້ທຳຄຸນໃນສັດເດັຽຣະສານຍັງດີກວ່າ ເຮົາທຳຄຸນໜ້ອຍນຶ່ງ ຕໍ່ ເສືອ, ລີງ ແລະ ງູ ຍັງໄດ້ຮັບຄວາມເປັນໃຫຍ່ເຖິງປານນີ້"

ຄັນພານກ່າວສໂລກອັນນີ້ແລ້ວ ຈຶ່ງກາບທູນເຫດການທີ່ເປັນມາ ຕັ້ງແຕ່ຕົ້ນໃຫ້ພຣະຣາຊາທົງຮູ້ທຸກປະການ ພຣະຣາຊາໄດ້ທົງສະດັບເຫດການຈຶ່ງມີພຣະຣາຊອາດຍາໃຫ້ຈັບເອົາຊ່າງຄຳນັ້ນໄປປະຫານເສັຽ.

ເສືອເລົ່ານິທານນີ້ໃຫ້ລີງຟັງແລ້ວ ຈຶ່ງເວົ້າຊ້ຳອີກວ່າ: "ເຫັນບໍ່ລີງ! ຄົນນີ້ຊື່ອທີ່ສຸດ ບໍ່ຮູ້ຈັກຄຸນສັງດອກ ເບິ່ງແຕ່ຊ່າງຄຳນັ້ນເຫາະ ສະນັ້ນ ມຶງຈຶ່ງວາງອ້າຍໝໍ່ນັ້ນລົງມາໃຫ້ກູກິນເສັຽ".

ລີງຕອບເສືອວ່າ: "ເອີຍ! ເສືອ ພວກສູແຮ່ງຮ້າຍ ໃຈຊີ້ໂຫດສາ-ມານບັກ ບໍ່ຮູ້ຈັກຄຸນຜູ້ໃດເລີຍ ຕົວຢ່າງພານໃຈດີເຫັນເສືອຕາຍມາປົວເອົາຄືນ ຍັງຖືກເສືອຕົວນັ້ນຂົບຕາຍຊ້ຳ"

ເສືອຖາມ: "ເຣື່ອງເປັນຢ່າງໃດ?"

ລີງຖແລງ:

### ນິທານແຊ້ມທີ ໑໒

### ເຣື່ອງພານກັບເສືອ

ປາງກ່ອນມີພານຜູ້ນຶ່ງ ໄປຮຽນສາດຕະສິນວາຄົມທີ່ເມືອງຕັກກະສິ-ລາ ໄດ້ວິຊາຊີວະວິທຍາ (ປົວຄົນຕາຍໃຫ້ຄືນໄດ້) ເວລາກັບຄືນມາເຖິງປ່າ-ໃຫຍ່ແຫ່ງນຶ່ງ ເຫັນເສືອໂຄ່ງຕົວນຶ່ງຖືກງູຕອດ ນອນຕາຍຢູ່ ພານຄິດຢາກລອງສາດຕະສິນທີ່ຮຽນມາໃໝ່ ຈຶ່ງເຂົ້າໄປຫາເສືອ ເພາະເຫັນວ່າ:

"ຄົນທີ່ຮຽນໄດ້ວິຊາໃໝ່ ໑ ຜູ້ໄດ້ຮັບອິສຣິຍະຍົດໃໝ່ ໑ ຜູ້ຊາກໄດ້-ສິນບັດໃໝ່ ໑ ຜູ້ກຳລັງຂຶ້ນໃຫຍ່ໃໝ່ ໑ ທັງ ໔ ຈຳພວກນີ້ຍ່ອມບໍ່ມີຄວາມອົດ-

ກັ້ນຍັງຕີນໄວ້ໄດ້"

ດັ່ງນັ້ນພານຈຶ່ງເສກມົນທີ່ໄດ້ຮຽນມາໃໝ່ເປົ່າໃຫ້ເສືອຄືນ ພໍເສືອຄືນມາ ກໍໂດດຂົບພານນັ້ນກິນເສັຽ ລີງເລົ່ານິຍາຍນີ້ໃຫ້ເສືອຟັງແລ້ວ ຈຶ່ງກ່າວສໂລກນີ້ວ່າ:

"ການທຳຄຸນໃຫ້ຄົນຜູ້ບໍ່ຮູ້ຈັກຄຸນນັ້ນ ແມ່ນຈັ່ງໃດມັນກໍຍັງບັງບຽດ-ທ່ານຜູ້ທີ່ໄດ້ທຳຄຸນໃຫ້ສເມີ ເສືອໂຄ່ງອາທັມ ມັນຍັງຂົບກິນພານຜູ້ປົ່ນປົວຕົນໃຫ້ຈົບຫາຍເສັຽ."

ຄາວນັ້ນ ມີພາຈອກຕົວນຶ່ງ ມາເຫັນເສືອນັ່ງແຫນໜ້າຢູ່ໃຕ້ຕົ້ນໄມ້ ຈຶ່ງຖາມວ່າ: "ສະຫາຍມານັ່ງແຫນໜ້າຢູ່ເຮັດສັງ?" ເສືອຕອບພາຈອກວ່າ "ກູເວົ້ານິທານສັ່ງສອນລີງ ເພື່ອໃຫ້ມັນຮູ້ເມື່ອຄິງໃນຄວາມໂງ່ຂອງມັນ ທີ່ມັນຫລົງຮັກມະນຸດຜູ້ອາທັມນັ້ນ" ພາຈອກວ່າ: "ເຈົ້າກູຈະມາຊັກນິທານໃຫ້ລີງຟັງດັ່ງນັ້ນ ມັນຈະຮູ້ຈັກສັງເດ! ເພີ່ນຍັງວ່າ:

"ຜູ້ມີຄວາມຄິດຍັງພໍຕຸກເຕືອນກັນໄດ້ ແຕ່ຜູ້ບໍ່ມີຄວາມຄິດ ບໍ່ຄວນຕຸກເຕືອນເລີຍ, ທັມມະຊາດລີງ ມັນຈະມີຄວາມຄິດປັນຍາແນວໃດ ເບິ່ງແຕ່ນົກຈອກຟ້າບອກສອນມັນດີໆ ມັນຍັງຄຽດແລະບັງບຽດນົກຈົນໄດ້ໜີປະຮັງ"

ເສືອ ຖາມ: "ເຣື່ອງເປັນແນວໃດ?"

ພາຈອກເລົ່ານິທານ:

## ນິທານແອັນທີ ໑໔

## ເຣື່ອງ ລີງ ກັບ ນົກຈອກຟ້າ

ແຄມຝັ່ງແມ່ນ້ຳນັມມະທາ ມີປ່າໄມ້ໃຫຍ່ງາມສາງຫລາງ ນົກຈອກຟ້າຕົວນຶ່ງ ເຮັດຮັງຢູ່ເທິງຕົ້ນໄມ້ໃນປ່ານັ້ນ ເທິງຕົ້ນໄມ້ມີແມງທັງຫອຍແລະ

ລີງຄິດນຶ່ງອາໄສຢູ່ນຳ.

ແລງວັນນຶ່ງ ເກີດລົມພາຍຸຝົນຊຸລົກຫາຫ່າໃຫຍ່ ຕົກລົງມາເປັນເວລາເຖິງນານ ນົກຈອກຟ້າເຂົ້າໄປນອນຢູ່ໃນຮັງຢ່າງບໍຣິມນະສຸກ ສ່ວນລີງນັ້ນຕາກຝົນຢູ່ເທິງງ່າໄມ້ຈົນໜາວສັ່ນ ນົກຈອກຟ້າເຫັນກໍມີຄວາມສົງສານຈຶ່ງກ່າວຕັກເຕືອນວ່າ: "ດູລາລີງ ມືຕີນ ແລະ ເພື່ອແຮງ ຂອງທ່ານມີຄົບຖ້ວນ ສາ-ມາດທຳກິຈການໄດ້ທຸກຢ່າງ (ເໝືອນມະນຸດ) ເຫດໃດທ່ານ ຈຶ່ງບໍ່ທຳເຮືອນນ້ອຍຢູ່ ພໍໃຫ້ມຸງໃຫ້ບັງລົມຝົນໄດ້."

ລີງໄດ້ຍິນທີ່ນັ້ນກໍຄຽດ ພໍຝົນເຊົາແລ້ວກໍແລ່ນຂຶ້ນໄປຈັບຮັງນົກຍອງ-ເສັງຈົນມຸ່ນ ນົກຈອກຟ້າເຫັນດັ່ງນັ້ນ ຈຶ່ງກ່າວຄຳສໂລກນີ້ຕໍ່ແມງຕັ້ງຫ້ອຍວ່າ: "ດູລາຕັ້ງຫ້ອຍ ທ່ານເບິ່ງເທາະ! ເບິ່ງອ້າຍອາທັມນັ້ນ ກູຫວັງປໂຍດໃຫ້ມັນຢູ່ສະບາຍ ຈຶ່ງກ່າວຕັກເຕືອນມັນໂດຍດີ ແຕ່ຄັ້ນແລ້ວຮັງຂອງກູ ຕ້ອງຈົບຫາຍຍ້ອນມັນ"

ຕັ້ງຫ້ອຍ ສເນີຕອບວ່າ: "ດູລານົກຈອກຟ້າ ທ່ານຈຶ່ງຮູ້ໄວ້ ທັມມະ-ດາໄມ້ແທ້ງຕາຍຂານ (ທີ່ຄົດງໍ) ຜູ້ມີປັນຍາບໍ່ຄວນເອົາມາເບັດ (ເຮັດໃຫ້ຊື່) ດາບງ້າວບໍ່ຄວນເອົາພັນກ້ອນຫີນ, ຄົນຜູ້ມີປັນຍາບໍ່ຄວນກ່າວເຕືອນຜູ້ຫຽາບ-ຊ້າກ້າແຂງເລີຍ"

ຜູ້ມີປຽາ ບໍ່ຄວນກ່າວເຕືອນຄຳອັນມີປໂຍດ ສອນຄົນຜູ້ປາກກ້າ-ທາຄວາມ, ຜູ້ມີປຽາຄວນຫລີກເວັ້ນການກິນຢູ່ຫລັບນອນນຳຄົນຊື່ອທຸກເວລາ.

ພາຈອກເລົ່ານິທານນີ້ແລ້ວ ຈຶ່ງກ່າວຊ້ຳອີກວ່າ: "ສັນຍະຊາດຂອງລີງນີ້ ມັນບໍ່ຮູ້ຈັກຕິດຈັກແນ່ນສັງດອກ ຢ່າສອນມັນເລີຍ ພຣະຍາທັມມະສົນ ແລະ ນະເຫສີ ຖືກຂ້າຕາຍ ກໍຍ້ອນຄວາມໂງ່ຂອງລີງ ນັ້ນເອງ."

ເສືອ ຖາມ: "ເຣື່ອງເປັນຢ່າງໃດ?"

ໝາຈອກເລົ່ານິທານຕື່ມ:

ນິທານແຊັນທີ ໑໕

ເຣື່ອງ ພຣະຍາທັມມະສິນ ກັບ ລີງ

ພຣະຍາທັມມະສິນ ສເວີຍຣາຊສົມບັດຢູ່ໃນນະຄອນມະເຫນທະຣາ ພຣະອົງລ້ຽງລີງໃຫຍ່ໄວ້ຕົວນຶ່ງ ແລະສອນໃຫ້ມັນຮູ້ຈັກຖືດາບຢືນຍາມເຝົ້າ-ພຣະອົງ ວັນນຶ່ງພຣະຣາຊາກັບພຣະມະເຫສີ ສະເດັດອອກໄປຫລິ້ນໃນສວນ ລໍາພັງແຕ່ສອງພຣະອົງ ພ້ອມກັບ ລີງເປັນຣາຊອົງຄະຣັກ ພຣະຣາຊາ ກັບ ພຣະມະເຫສີເກັບດອກໄມ້ຮ້ອຍເປັນພວງມາໄລໃສ່ຄໍ ແລ້ວຂຶ້ນໄປບັນທົມຫຼັບ ຢູ່ເທິງຫໍມິນດົບ ຕັດສັ່ງລີງໃຫ້ຖືດາບຢືນເຝົ້າວ່າ ຖ້າມີຜູ້ໃດຜູ້ນຶ່ງມາທີ່ນີ້ ຈົ່ງ ຟັນເສັຽ ສັ່ງແລ້ວ ພຣະຣາຊາ ກັບ ພຣະມະເຫສີ ກໍບັນທົມຫລັບໄປ ເວ-ລານັ້ນ ມີແມງພູ່ໂຕນຶ່ງບິນມາຕອມດອກໄມ້ທີ່ຄ້ອງຢູ່ຄໍພຣະຣາຊາແລະພຣະ-ມະເຫສີ ລີງເຫັນດັ່ງນັ້ນ ກໍຄິດວ່າແມງພູ່ຈະມາທໍາອັນຕະຣາຍແກ່ພຣະຣາ-ຊາ ຈຶ່ງຍົກດາບຂຶ້ນຟັນແມງພູ່ ດາບເລີຍຖືກພຣະສໍ (ຄໍ) ຂອງພຣະຣາຊາ ແລະ ພຣະມະເຫສີ ຂາດຕາຍ. ເພາະສະນັ້ນ ຂ້າພະເຈົ້າ(ໝາຈອກ)ຈຶ່ງ ວ່າ ສັບພະຊາດລີງ ບໍ່ຮູ້ຈັກຜິດຈັກແມ່ນ ໝາຈອກກ່າວທີ່ນີ້ແລ້ວກໍໜີໄປ.

ຝ່າຍເສືອນັ້ນ ເຝົ້ານາຍພານກັບລີງຢູ່ຈົນເດິກ ເຫັນທ່າຈະບໍ່ໄດ້ກິນ ແນ່ແລ້ວ ກໍເລີຍໜີໄປ ສ່ວນນາຍພານນອນຢູ່ງ່າໄມ້ນັ້ນກັບລີງ ພໍຮຸ່ງເຊົ້າມາ ລີງຈະໄປຫາໝາກໄມ້ມາສູ່ນາຍພານກິນ ຈຶ່ງຝາກລູກນ້ອຍສອງໂຕ ໃຫ້ນາຍ ພານຮັກສາ ພໍແມ່ລີງໄປແລ້ວ ນາຍພານຜູ້ອະກະຕັນຍູ ທົນຄວາມຫິວບໍ່ໄດ້ກໍ ຂ້າລູກລີງສອງໂຕນັ້ນປີ້ງໄຟກິນເສັຽ ແຖມຍັງຄິດອີກວ່າ ເມື່ອກັບຄືນເມືອ

ບໍ່ໄດ້ເບື່ອຖືກແນວໃດຕິດນີ້ເນື້ອ ລູກເມັຍຂອງກູກໍຈະຮ້າຍດ່າ ຈຶ່ງໃດກໍຕ້ອງເອົາແມ່ລີງຕົວນີ້ແຫລະ ເນື້ອເປັນອາຫານ ຄຶດດັ່ງນີ້ແລ້ວ ພໍແມ່ລີງກັບຄືນມາ, ນາຍພານກໍເອົາຄ້ອນທຸບຫົວແມ່ລີງຕາຍ ແລ້ວຖືເດີນກັບຄືນມາເຮືອນ ມາເຖີງກາງທາງ ພຣະທໍຣະນີກໍ່ແຍກອອກສູບເອົານາຍພານລົງໄປຕົກຢູ່ໃນພື້ນນາ-ຣົກໜ່ວຍຊື່ວ່າ ຕະປາຕະ ນັ້ນແລ.

ນົກແຕບແຕ້ ອຸດຕານະປາຕະ ເລົ່ານິຍາຍໃຫ້ເມັຍຟັງແລ້ວ ຈຶ່ງໃຫ້ປະຊຸມບັນດານົກທັງຫລາຍ ເລົ່າເຫດຄວາມເດືອດຮ້ອນໃຫ້ພວກນົກຟັງ ແລ້ວຈຶ່ງພາກັນບິນໄປຫາພຣະຍາຄຸດ ຖແລງເຫດໃຫ້ຊາບ ພຣະຍາສຸບັນນະປັກສີກໍນຳເຫດເດືອດຮ້ອນຂອງນົກແຕບແຕ້ນັ້ນ ຂຶ້ນສເນີຕໍ່ພຣະນາຣາຍ ຜູ້ເປັນເຈົ້າສ້າງໂລກ ແລ້ວພຣະນາຣາຍກໍທົງບັນດານໃຫ້ຜອງນ້ຳສມຸດນັ້ນ ໄຫລທວນຄືນນຳເອົາໄຂ່ນົກແຕບແຕ້ມາໄວ້ທີ່ຫາດຊາຍດັ່ງເດີມ.

ອະສຸພາຄຍະ ເລົ່ານິທານນີ້ສຸດແລ້ວ ຈຶ່ງກ່າວສໂລກນີ້ວ່າ: " ຂ້າແຕ່ຣາຊາ ອັນຄົນຜູ້ມີກຳລັງມາກ ມັກຖືຫມິ່ນຜູ້ມີກຳລັງໜ້ອຍວ່າ ເຂົາບໍ່ອາດທຳອັນຕະຣາຍໃຫ້ໄດ້ ແຕ່ພຣະອະຣຸນະ(ເຈົ້າແຫ່ງປີນ) ຜູ້ມີສງ່າດັ່ງກັອງພິລຶກ, ຍັງຖືກນົກແຕບແຕ້ຫາບແພ້ໄດ້ ເພາະສະນັ້ນ ຂ້າພະເຈົ້າຈຶ່ງວ່າ ນອກຈາກເບິ່ງສະພາບຮ່າງກາຍ ແລະ ສິ່ງທີ່ກ່ຽວກັບຮ່າງກາຍແລ້ວ ຈະກະປະມານ-ກຳລັງອັນແທ້ຈິງຂອງຜູ້ອື່ນບໍ່ໄດ້.

ຣາຊສີ ຖາມ: "ເຮັດຈັ່ງໃດຈຶ່ງຊິຮູ້ຈັກຄັກແນ່ວ່າ ວົວນັນທະກະຄິດຮ້າຍຕໍ່ເຮົາ"

ອະສຸພາຄຍະ ຕອບ: "ໃຫ້ພຣະບາດຄອຍສັງເກດ ເມື່ອນັນທະກະເຂົ້າມາ ຄືງກົ້ມຫົວຕັ້ງທ່າຊົນເຂົ້າມາ ບາດນັ້ນແຫລະຈະຮູ້ໄດ້......

 



ແລະ ຈຶ່ງລະວັງໄວ້" ວ່າແລ້ວ ອະນຸພາຄຍະ ກໍລາໜີໄປຫາງົວນັນທະກະ, ງົວນັນທະກະເຫັນອະນຸພາຄຍະມາ ຈຶ່ງຖາມວ່າ: "ສະບາຍດີບໍ່! ສະຫາຍ" ອະນຸພາຄຍະ ຕອບ: "ອັນຮ່າງກາຍສະບາຍດີຢູ່ດອກ ແຕ່ຂ້າພະເຈົ້າ ອຸກ ໜີກອຸກໃຈເຕັມທີ ເພາະມັນເຂົ້າຫຳນອງທີ່ເພີ່ນວ່າ ຖີ້ມໝາເສັງດາຍເຕົ່າ, ຖີ້ມເຕົ່າກໍເສັງດາຍໝາ ຂ້າພະເຈົ້າກຳລັງຕົກຢູ່ໃນລະຫວ່າງກາງໄພ ບໍ່ຮູ້ ຈະຊ່ອຍຝ່າຍໃດດີ ເພາະຝ່າຍນຶ່ງເປັນນາຍ ອີກຝ່າຍນຶ່ງເປັນເພື່ອນ"

ນັນທະກະຮ້ອນໃຈ ຈຶ່ງຖາມວ່າ: "ເຣື່ອງອີ່ຍັງກັນ? ທ່ານມີ ຄວາມຄັບອົກຄັບໃຈແນວໃດ ບອກມາດູ!"

ອະນຸພາຄຍະ ເຂົ້າໄປໃກ້ແລ້ວສື່ນໄສ່ຫູນັນທະກະວ່າ "ສ່ຽວເອີຍ ຂ້າພະເຈົ້າມີຄວາມອິຕົກນຳທ່ານຫລາຍ ເພາະດຽວນີ້ສິງໂຄດເຫັນວ່າ ຮາຊສີ ຊູ່ເປັນນາຍຂອງເຮົາ ບໍ່ມີຄວາມພໍໃຈໃນຕົວເຈົ້າເສັງແລ້ວ ໄດ້ຍິນ ເພີ່ນເວົ້າເປັນຄວາມລັບວ່າ ຈະຕ້ອງຂ້າເຈົ້າກິນເສັງ ຂ້າພະເຈົ້າໄດ້ຍິນ ມາດັ່ງນີ້ ຈຶ່ງອຸກໃຈຫລາຍ ເພາະການທີ່ທ່ານໄດ້ມາຢູ່ທີ່ນີ້ ເປັນຸກກໍຍ້ອນ ຂ້າພະເຈົ້າພາມາ ທ່ານ ແລະ ຂ້າພະເຈົ້າ ເປັນສະຫາຍກັນ ຂ້າພະເຈົ້າ ມີຄວາມສົງສານໃນເຣື່ອງນີ້ ຈຶ່ງມາຕຸກເຕືອນ ຂໍໃຫ້ຟັງຂ້າພະເຈົ້າຜູ່ຫວັງດີ, ຜູ່ໃດບໍ່ຟັງຄວາມຕຸກເຕືອນຂອງສະຫາຍຜູ່ຫວັງດີ ຜູ່ນັ້ນຕ້ອງເຖິງຄວາມພິນາດ ດັ່ງດຽວກັນກັບເຕົ່າບໍ່ຟັງຄວາມຫົງ"

ນັນທະກະ ຖາມ: "ເຣື່ອງເປັນຢ່າງໃດ?"

ອະນຸພາຄຍະ ເລົ່ານິທານ:

## ນິທານແບ້ນທີ ໑໗

## ເຣື່ອງ ເຕົ່າ ກັບ ຫົງ

ປາງກ່ອນ ມີໜອງນ້ຳຊື່ ພຸນໂລດະບິນ ຢູ່ໃນປະເທດມະຄົດ ມີເຕົ່າສອງຕົວຊື່ ສັງກະຕະ ແລະ ວິກະຕະ ອາໄສຢູ່ໃນໜອງນັ້ນ ຫົງທັງສອງຈຶ່ງ-ເວົ້າກັບເຕົ່າວ່າ: "ສ່ຽວເອີຍ! ນ້ຳໃນໜອງນີ້ບົກແຫ້ງໝົດແລ້ວ ພວກເຮົາຈະອາໄສຢູ່ໄດ້ຢ່າງໃດ? ເພາະບໍ່ມີອິນຈະກິນ ດັ່ງນັ້ນພວກເຮົາຕ້ອງຍ້າຍໄປຫາຢູ່ໜອງອື່ນທີ່ມີນ້ຳ ແລະ ອາຫານບໍລິບູນ ແລະເລື່ອງບ່ອນຢູ່ໃໝ່ນີ້ ຂ້າພະເຈົ້າ ໄດ້ໄປເຫັນມາແລ້ວ ມີໜອງນ້ຳຊື່ ບັນທະນະ ຢູ່ແຄມປ່າໃຫຍ່ໃນອຸດຕະ-ຣະປະເທດ ເຮົາມາພາກັນໄປຢູ່ໜອງນັ້ນເຖີ້ນ"

ເຕົ່າກ່າວວ່າ: "ສະຫາຍທັງສອງມີປີກຫາງ ຈະໄປເວລາໃດກໍໄດ້ບໍ່ຍາກລຳ ສ່ວນຂ້າພະເຈົ້າຈະໄປໄດ້ຢ່າງໃດ?"

ຫົງກ່າວວ່າ: "ຖ້າສະຫາຍຟັງຄວາມເຮົາ ເຮົາກໍຈະຫາອຸບາຍພາສະຫາຍໄປຈົນໄດ້ ຂໍແຕ່ໃຫ້ຟັງຄຳຕັກເຕືອນຂອງເຮົາໃຫ້ໄດ້".

ເຕົ່າ ຖາມ: "ສະຫາຍຈະທຳຢ່າງໃດ?"

ຫົງບອກ: "ເຮົາທັງສອງຈະຄາບສົ້ນໄມ້ຄົນລະທາງ ໃຫ້ສະຫາຍຄາບທາງກາງ ແລ້ວຈະພາບິນໄປ ແຕ່ທ່ານຕ້ອງລະວັງໃຫ້ດີ ເວລາພວກເຮົາພາທ່ານໄປໃນອາກາດ ທ່ານຢ່າເວົ້າຈາແນວໃດເປັນອັນຂາດ ເຖິງແມ່ນຈະມີຜູ້ໃດວ່າກ່າວທັກທ້ວງແນວໃດກໍຢ່າລັງປາກເວົ້າ ຖ້າທ່ານລະວັງໄດ້ທ່ານຈະໄດ້ໄປຢູ່ສະບາຍນຳພວກເຮົາ".

ເຕົ່າຮັບຮອງ: "ເອີດີແລ້ວ ຂ້າພະເຈົ້າຈະບໍ່ລືມຄຳເຕືອນຂອງສະ-ຫາຍດອກ ກະລຸນາພາຂ້າພະເຈົ້າໄປໂດຍໄວເຖີ້ນ"

ເມື່ອຕົກລົງສັນຍາກັນຮຽບຮ້ອຍແລ້ວ ຫົງທັງສອງກໍຄາບສົ້ນໄມ້ຄົນ-ລະສົ້ນ ໃຫ້ເຕົ່າຄາບທາງກາງ ແລ້ວພາເຕົ່າບິນໄປ ພໍໄປເຖິງຍ່ານກາງ-

ປ່າແຫ່ງນຶ່ງ ມີໝາຈອກຕົວນຶ່ງ ເຫັນຫົງຫາມເຕົ່າບິນມາກໍຄຶດໃນໃຈວ່າ "ເຕົ່າຕົວນີ້ ຖ້າກູຢູ່ໃຫ້ມັນອ້າປາກໄດ້ ມັນຕ້ອງເປັນອາຫານຂອງກູແນ່ນອນ" ຄຶດແລ້ວ ຈຶ່ງແຫງນໜ້າຂຶ້ນເວົ້າກັບຫົງວ່າ: "ເຮີຍ! ຫົງ ເຂືອຈັກຫາມເຕົ່າໄປໃສ? ຊາດເຕົ່ານີ້ ມັນເຄີຍຢູ່ນ້ຳ ເຂືອພາມັນໄປທາງອາກາດດັ່ງນີ້ ມັນຈະຂາດໃຈຕາຍສາບໍ້! ຈະເອົາມັນໄປເປັນປໂຍດແນວໃດ ຫລື ວ່າພວກທ່ານຈະເອົາມັນໄປກິນເປັນອາຫານ" ເຕົ່າໄດ້ຍິນຄຳໝາຈອກກ່າວດັ່ງນັ້ນກໍຄຽດຄຶດຈະຕອບໝາຈອກວ່າ: "ທຸຣະອັນໃດກັບມຶງ ມຶງຈຶ່ງມາວ່າໃຫ້ ພວກກູເປັນສະຫາຍກັນ ຈະໄປນຳກັນທາງໃດກໍຄຳແລ້ວ ມຶງບໍ່ຕ້ອງມາເວົ້າ" ຄຶດແລ້ວກໍອ້າປາກຂຶ້ນຈະດ່າໝາ ປາກ:ລິຍຫລຸດຈາກໄມ້ຕົກລົງມາຕາຍ.

ເພາະສະນັ້ນ ຂ້າພະເຈົ້າຈຶ່ງວ່າ "ຜູ້ໃດ ບໍ່ຟັງຄວາມຕັກເຕືອນ-ຂອງເພື່ອນຜູ້ຫວັງດີ ຜູ້ນັ້ນ ຕ້ອງເຖິງຄວາມພິນາດ"

ບັນທະກະ ຖາມ ອະສຸພາຄຍະ ວ່າ : "ຂ້າພະເຈົ້າໄດ້ເຮັດຜິດແນວໃດໜໍ! ເຈົ້ານາຍຈຶ່ງຄຽດຊັງ ຈົນຫວັງທຳຮ້າຍເຖິງປານນີ້"

ອະສຸພາຄຍະ ຕອບ: "ທ່ານຈຶ່ງຟັງບູຮານເພິ່ນວ່າ ການທຳຄຸນ-ນຳຄົນພານສັນດານຫຽາບ ຕັ້ງຮ້ອຍເທື່ອກໍບໍ່ມີຜົນ, ກ່າວສຸນທອນພົດ (໑) ໃຫ້ຄົນໂງ່ຟັງຕັ້ງຮ້ອຍທົນກໍເສັຽການ, ເວົ້າສອນຜູ້ມີສັນດານດຶດຖົດ ຕັ້ງຮ້ອຍສະ-ຖານ ກໍບໍ່ມີປໂຍດ, ແນະນຳຄົນສາໂຫດປັນຍາປູ້ຕັ້ງຮ້ອຍແນວກໍເມື່ອຍລ້າ; ອີກປະການນຶ່ງ ເພິ່ນຍັງວ່າ ຢ່າໄວ້ໃຈ ແມ່ນ້ຳ, ຜູ້ມີສາດຕາອາວຸດໃນມື, ສັດມີເລັບ, ມີເຂົາ, ສັດຕີ ແລະ ພຣະຣາຊາ.

ສະນັ້ນ ທ່ານຈຶ່ງລະວັງຟັງຄຳເຕືອນຂອງຂ້າພະເຈົ້າ ເພາະນິໄສສັດຕູປາກຫວານປານນ້ຳອ້ອຍ ແຕ່ໃຈນ້ອຍເໝືອນເຂົາຂໍ; ປະການນຶ່ງ ຜູ້ທີ່

(໑) ສຸນທຣພົຈນ໌ ເວົ້າດີ, ເວົ້າຄຳມີປໂຍດ.

ກຳລັງເມົາອຳນາດ ກໍມັກປະມາດຂົ່ມເຫງຜູ້ບໍ່ມີກຳລັງສເມີກັນ ດ້ອຍເຂົ້າໃຈ ວ່າ ເຂົາຈະບໍ່ເຮັດສັງຕົນໄດ້ ດັ່ງຊ້າງສານຊັບມັນ ຢຽບລູກນົກໄສ່ ຕາຍສັນນັ້ນ".

ນັນທະກະ ຖາມ: "ເຣື່ອງເປັນຢ່າງໃດ?"

ອະນຸພາຄຍະ ເລົ່ານິທານ:

ນິທານແອັນທີ ໑໓

ເຣື່ອງ ຊ້າງ ກັບ ນົກໄສ່

ຢູ່ປ່າເວຣຸວັນ ມີນົກໄສ່ເຮັດຮັງຢູ່ເທິງສຸມໄຜ່ ຄັ້ງນັ້ນມີຊ້າງສານ ຕົວນຶ່ງກຳລັງຊັບມັນເດີນກິນມາທາງນັ້ນ ນາງນົກໄສ່ເຫັນຊ້າງມາ ຢ້ານ ຊ້າງດຶງຮຽວໄຜ່ທີ່ຮັງຂອງຕົນຢູ່ ຈຶ່ງເຂົ້າໄປຫາຊ້າງ ໄຫວ້ວອນວ່າ: "ຂ້າແຕ່ ເຈົ້າຜູ້ປະເສີດ ທີ່ນີ້ເປັນບ່ອນຢູ່ຂອງຂ້າພະເຈົ້າ ແລະເວລານີ້ ລູກ ຂອງຂ້າພະເຈົ້າຍັງອ່ອນບິນບໍ່ທັນໄດ້ ຂໍເຈົ້າຜູ້ຈົ່ງຢ່າໄດ້ດຶງຮຽວໄຜ່ ທີ່ຮັງ ຂອງຂ້າພະເຈົ້າຢູ່ນັ້ນເຖີດ ໂຜດໄດ້ກະຣຸນາຫລີກໄປທາງອື່ນກ່ອນ"

ຊ້າງສານໄດ້ຍິນນາງນົກໄສ່ເວົ້າດັ່ງນັ້ນ ກໍໂອດລະຫາວ່າຕົນມີກຳລັງມາກ ຈຶ່ງຕອບນາງນົກວ່າ: "ເບິ່ງດູ! ນາງນົກນ້ອຍ ເຫດໃດມຶງ ຈຶ່ງມາເຮັດຮັງຢູ່ບ່ອນຫາກິນຂອງກູ ທີ່ປ່ານີ້ເປັນເຂດແດນຂອງກູພິດ ໃຜຈະ ມາກີດຂວາງບ່ອນຫາກິນຂອງກູບໍ່ໄດ້" ວ່າແລ້ວກໍດຶງຮຽວໄຜ່ອັນນົກເຮັດຮັງ ໄສ່ນັ້ນ ນາຍຳຍີເສັຽ ຢຽບລູກນົກໄສ່ແຫລກລະອຽດແລ້ວກໍໜີໄປ.

ນາງນົກໄສ່ມີຄວາມເສັຽໃຈເປັນອັນມາກ ຈຶ່ງໄຫວ້ວອນນົກຕົວຜົວ ວ່າ: "ທ່ານສາມີ ເຮັດຈັ່ງໃດເຮົາຈຶ່ງຈະແກ້ແຄ້ນສັດຕົວຫລວງນີ້ໄດ້" ນົກ ຕົວຜົວເຫັນເມັຽທຸກໂສກນຳລູກດັ່ງນັ້ນ ຈຶ່ງໄປປຶກສານຳກາຕົວຊື່ວ່າ.....

ອະຣິດຖະ ທີ່ເປັນສະຫາຍກັນ ບອກເຫດການທີ່ຊ້າງຂ້າລູກຕົນ ໃຫ້ສະຫາຍຟັງ ກາສະຫາຍກ່າວວ່າ: "ເພື່ອນເອີຍ! ຈະທຸກໂສກໄປເຮັດຫຍັງ ເພາະຄວາມຕາຍນີ້ເປັນຂອງທັມມະດາ ເມື່ອມັນເຖິງເວລາແລ້ວແມ່ນໃຜຈະຫລີກເວັ້ນໄດ້ ເພາະສະນັ້ນ ທ່ານຢ່າໄດ້ເປັນທຸກນຳລູກທີ່ຕາຍໄປແລ້ວນັ້ນອີກເລີຍ ເພາະຄວາມຕາຍເປັນຂອງທັມມະດາ ແຕ່ສິ່ງທີ່ຄວນເຮັດໃນເວລານີ້ກໍຄື ທຳຢ່າງໃດສັດຕູຂອງທ່ານຈຶ່ງຈະເຖິງຄວາມພິນາດ ທ່ານຈຶ່ງຄຶດຫາອຸ-ບາຍນັ້ນ ດີກວ່າຈະໂສກເສົ້າ" ເວົ້າແລ້ວກໍໃຫ້ນົກໄສ່ໄປຫາມັນທຸກະຂາດ (ພຣະຍາກົບ) ຜູ້ສະຫາຍ ຂໍໃຫ້ບອກອຸບາຍອັນຈະກຳຈັດຊ້າງ ນາງນົກໄສ່. ໄປຫາພຣະຍາກົບ ເລົ່າເຫດການທີ່ເປັນມາໃຫ້ຊາບທຸກປະການ ພຣະຍາກົບ ໄດ້ຟັງຈຶ່ງກ່າວວ່າ: "ສຽວເອີຍ! ຊ້າງຕົວນັ້ນ ມັນອວດສະຫາວອ້າງວ່າຕົວໃຫຍ່ມີກຳລັງຫລາຍ ໃຜບໍ່ອາດຈະຕໍ່ສູ້ໄດ້ ມັນຈຶ່ງໄດ້ຂົ່ມເຫງທ່ານຜູ້ມີກຳລັງໜ້ອຍ, ທີ່ແທ້ ເມື່ອຜູ້ມີກຳລັງໜ້ອຍ ຫລື ບໍ່ມີກຳລັງກໍຕາມ ແຕ່ມີຜຽງປັນຍາປະກອບອຸບາຍສລາດ ກໍອາດສາມາດປະຈົນແພ້ຜູ້ມີກຳລັງມາກໄດ້ດັ່ງດຽວກັບເຕົ່າຜາບແພ້ພຣະຍາຄຸດ ສັນນັ້ນ"

ນົກໄສ່ ຖາມ: "ເລື່ອງເປັນຢ່າງໃດ?"

ກົບ ເລົ່ານິຍາຍ:

## ນິທານແຊ້ມທີ ໑໘

## ເລື່ອງ ເຕົ່າກັບຄຸດ

ມີຄຸດຕົວນຶ່ງບິນໄປຫາອາຫານແຄມຝັ່ງມະຫາສມຸດ ເຫັນເຕົ່າຕົວນຶ່ງ ກຳລັງຄານງຸບງັບມາ ຈຶ່ງຊຸດລົງຫງຸມເອົາໄດ້ ເຕົ່າຕົກໃຈ ແຕ່ຕັ້ງສະ-ຕິ ໄດ້ວ່າ: "ເວລາໃດທີ່ໄພອັນຕະລາຍຍັງຢູ່ໄກ ກໍຄວນຢ້ານ ແລະຫລີກ

ເວັ້ນໄພອັນຕະຣາຍນັ້ນໃຫ້ໄກ  ແຕ່ເມື່ອມັນມາໃກ້ແລ້ວ ກໍຄອນຈັດການໃຫ້-ເໝາະສົມ" ຄິດແລ້ວຈຶ່ງເວົ້ານຳຄຸດວ່າ: "ດູກ່ອນພຣະຍາຄຸດ ທ່ານມາຫຼອນຈູດເອົາຂ້າພະເຈົ້າໄດ້ດັ່ງນີ້ ທ່ານຢ່າຟ້າວອວດອ້າງວ່າຕົວມີກຳລັງມາກ ຖ້າທ່ານມີກຳລັງມາກແທ້ ທ່ານຈຶ່ງປ່ອຍຂ້າພະເຈົ້າເສັຽກ່ອນແລ້ວຈຶ່ງມາລອງອີດທີກັນໃໝ່ ຖ້າຂ້າພະເຈົ້າສູ້ທ່ານບໍ່ໄດ້ນັ້ນແຫລະ ທ່ານຈຶ່ງກິນຂ້າພະເຈົ້າເສັຽ"

ຄຸດຖາມ: "ຈະລອງກັນດ້ວຍວິທີໃດ?"

ເຕົ່າຕອບ: "ເສັງກັນຂ້າມມະຫາສມຸດຕີ້! ທ່ານບິນໄປທາງອາກາດ ຂ້າພະເຈົ້າຈະມຸດໄປທາງນ້ຳ ໃຜຈະຮອດຝັ່ງພຸ້ນກ່ອນກັນ ໃຜຮອດກ່ອນຜູ້ນັ້ນຕ້ອງແພ້"

ຄຸດໄດ້ຟັງເຕົ່າກໍຄິດຫົວຂວັນຢູ່ໃນໃຈວ່າ: "ບ໋າອ້າຍເຕົ່າຕົວນີ້ ມັນອວດເກັ່ງ ຈະລອງດີກັບມັນເບິ່ງກ່ອນ ກູບິນກັບໄປກັບມາຈັກພັນຖ້ຽວ ມັນຈະໄປເດ້ຈັກກີ່ວາໜໍ!" ຄິດແລ້ວກໍວາງເຕົ່າເສັຽ ແລ້ວຕົກລົງນັດວັນຈະສະແດງຣິດເສັງກັນ.

ຝ່າຍເຕົ່າ ພໍຄຸດໜີໄປແລ້ວ ຈຶ່ງຮຽກປະຊຸມບັນດາຍາດພີ່ນ້ອງ ເຕົ່າທັງຫລາຍທີ່ຢູ່ໃນມະຫາສມຸດ ນັດໝາຍໃຫ້ເຕົ່າຢາຍກັນຢູ່ຕັ້ງແຕ່ຝັ່ງທາງນີ້ ຈົນເຖິງຝັ່ງທາງນັ້ນ ເມື່ອໃດຄຸດຮ້ອງຫາ ໃຫ້ຂານຮັບເປັນຣະຍະໆໄປ  ຄັນນັດໝາຍກັນຮຽບຮ້ອຍແລ້ວ ເຖິງວັນນັດແຂ່ງຂັນຄຸດກໍບິນມາຫາເຕົ່າ  ເຕົ່າບອກຄຸດວ່າ: "ທ່ານບິນໄປທາງອາກາດ ອາດຈະບໍ່ເຫັນຂ້າພະເຈົ້າເຊິ່ງຢູ່ໃນນ້ຳ ສະນັ້ນ ເມື່ອທ່ານບິນໄປໆ ຈຶ່ງຮຽກຫາຂ້າພະເຈົ້າລເມີເນີ!"

ຕົກລົງກັນແລ້ວ ຄຸດກໍອອກບິນ ເຕົ່າກໍຄານລົງນ້ຳ ພໍເຖິງກາງສມຸດ ຄຸດຈຶ່ງລອງຮຽກຫາເຕົ່າເບິ່ງ ກໍໄດ້ຍິນສຽງເຕົ່າຂານຢູ່ທາງໜ້າໂດຍທຳນອງ

ນີ້ ຈົນເຖິງຝັ່ງມະຫາສມຸດ ເປັນອັນວ່າເຕົ່າແພ້ຄຸດດ້ວຍອຸບາຍອັນສລາດ, ຄຸດຈຶ່ງບໍ່ອາດກິນເຕົ່າໄດ້.

ເພາະສະນັ້ນ ຂ້າພະເຈົ້າຈຶ່ງວ່າ (ກົບເວົ້າ) "ຜູ້ມີກຳລັງໜ້ອຍ ແຕ່ມີຫຼຽວປັນຍາປະກອບດ້ວຍອຸບາຍອັນສລາດ ກໍອາດປະຈົນແພ້-ຜູ້ມີກຳລັງມາກໄດ້ ດັ່ງນີ້ແລ.

ກົບເລົ່ານິຍາຍນີ້ໃຫ້ນົກໄສ່ຟັງແລ້ວ ຈຶ່ງເວົ້າຕໍ່ໄປອີກວ່າ: "ສະນັ້ນ ພວກເຮົາຄວນພ້ອມພຽງກັນ ຄິດຫາອຸບາຍກຳຈັດຊ້າງຕົວນັ້ນໃຫ້ໄດ້ ເພາະເພິ່ນວ່າ: ຄວາມສາມັກຄີໂຮມກຳລັງກັນຂອງສິ່ງເລັກນ້ອຍ ສາມາດເຮັດໃຫ້ວຽກການທີ່ກະທຳສຳເຣັດພົນໄດ້ຕາມປະສົງ ດັ່ງເສັ້ນຫຍ້າທີ່ຟັ່ນເຂົ້າກັນເປັນເຊືອກ ຍັງສາມາດຜູກຊ້າງສານທີ່ຊົມມັນໄດ້; ອັນກຳລັງແຮງຂອງ-ໝູ່ຍາດພີ່ນ້ອງທີ່ສາມັກຄີກັນທຳປໂຍດ ກຳລັງແຮງຂອງພຣະອິນກໍບໍ່ສາມາດຈະປ້ານໄດ້."

ດັ່ງນີ້ແລ້ວ ນົກເສ່, ກາ, ກົບ ຈຶ່ງພາກັນໄປຫາແມງວັນຂຽວ, ເລົ່າເຫດການໃຫ້ແມງວັນຂຽວຟັງດັ່ງໄດ້ກ່າວມາແລ້ວ ແມງວັນຂຽວຈຶ່ງວ່າ "ດີແລ້ວສະຫາຍ! ຖ້າເຮົາພ້ອມພຽງກັນໄດ້ດັ່ງນີ້ ກໍອາດປະຈົນແພ້ຊ້າງຕົວນັ້ນໄດ້ ແຕ່ຕ້ອງຄິດຫາອຸບາຍອັນສລາດເປາສຈາກອະບາຍຄືຄວາມວິບັດກ່ອນ ນົກຍາງເຖົ້າຄິດຫາແຕ່ອຸບາຍ ບໍ່ຄິດຫາອະບາຍເລີຍຖືກຈອບພອນກິນລູກໝົດ"

ນົກໄສ່, ກາ, ກົບ ຖາມ: "ເຣື່ອງເປັນຢ່າງໃດ?"

ແມງວັນຂຽວ ເລົ່ານິທານ:

ນິທານແຮັມທີ ໑໙

ເຣື່ອງ ນົກຍາງ ກັບ ຈອບພອນ

ນົກຍາງໝູ່ນຶ່ງອາໄສເຮັດຮັງຢູ່ເທິງຕົ້ນໄຮໃຫຍ່ໃກ້ຝັ່ງແມ່ນ້ຳເຣວາ, ມີງູຕົວນຶ່ງ ອາໄສຢູ່ຮູໂກນຕົ້ນໄຮນັ້ນ ແລະ ເຄີຍກິນລູກນ້ອຍນົກຍາງສເມີ ດັ່ງນັ້ນ ມີນົກຍາງເຖົ້າຕົວນຶ່ງ ເຫັນພວກນົກຍາງທັງຫລາຍທຸກໂສກນຳລູກ ຈຶ່ງບອກອຸບາຍທີ່ຈະຂ້າງູຕົວນັ້ນວ່າ: "ພວກເຮົາໄປຫາປາມາວາງໄວ້ຕັ້ງແຕ່ປາກຮູຈອນພອນມາຈົນເຖິງໂກນງູກໍແລ້ວກັນ" ຕາມອຸບາຍນີ້ ຈອນພອນມາເຫັນງູເຂົ້າ ກໍຈະສັງຫານງູເສັຽຕາມສະພາບແຫ່ງເວນກັມຂອງເຂົາ ເມື່ອພ້ອມພຽງກັນເຮັດຕາມນີ້ແລ້ວ ງູກໍຖືກຈອນພອນຂົບຕາຍເສັຽຕາມປະສົງ ແຕ່ພາຍລຸນມາ ຈອນພອນກໍກິນລູກນົກຝູງນັ້ນເສັຽຈົນໝົດກັງງາ.

ດັ່ງນີ້ ຂ້າພະເຈົ້າ(ແມງວັນຂຽວເວົ້າ)ຈຶ່ງວ່າ ຕ້ອງຄິດຫາອຸບາຍອັນສລາດປາສຈາກອະບາຍ(ຄືຄວາມວິບັດ) ວ່າແລ້ວແມງວັນຂຽວ ຈຶ່ງຊວນພວກສະຫາຍທັງ ໓ ໄປຫານົກ ວາສະວະ(ນົກຕອດຢຸ່ມ) ເລົ່າເຫດການທັງມວນ-ໃຫ້ຟັງ ແລ້ວຂໍໃຫ້ສະຫາຍທຳການຊ່ອຍເຫລືອ ນົກວາສະວະ ຈຶ່ງວ່າ: "ການທີ່ພວກສະຫາຍມາຂໍໃຫ້ຂ້າພະເຈົ້າຊ່ອຍເຫລືອໃນຄັ້ງນີ້ ຂ້າພະເຈົ້າກໍບໍ່ຂືນ ແຕ່ຂ້າພະເຈົ້າເຄີຍໄດ້ຍິນຄຳບູຮານວ່າ: ຄົນເມື່ອໄດ້ປະສົບໄພອັນໜ້າຢ້ານ ຫາລານແລ່ນຫາໃຫ້ຜູ້ອື່ນຊ່ອຍ ໂດຍສັນຍາຈະຕອບຄຸນຢ່າງນັ້ນຢ່າງນີ້ ແຕ່ພໍພົ້ນໄພໄປແລ້ວກໍເສີຍເສັຽ ດັ່ງດຽວກັນກັບເສືອຂໍອ້ານໃຫ້ນົກມະຣະຄຸດດີສັບດູກກວາງອອກຈາກຫວ່າງແຂ້ວ"

ສະຫາຍ ນົກໄສ່, ກາ, ແມງວັນ ຖາມ: "ເຣື່ອງເປັນຢ່າງໃດ?"

ນົກວາສະວະ ເລົ່ານິທານ:

ນິທານແອັນທີ ໔໐

ເຣື່ອງ ເສືອກັບນົກມະຣະຄຸດດີ

ແຕ່ກ່ອນທີ່ປ່ານີ້ ມີເສືອໂຄ່ງຕົວນຶ່ງປະຫານກວາງໄດ້ແລ້ວກໍແກ່ນາ ກິນຢູ່ໃຕ້ຕົ້ນໝາກກ່ອງ ຄັນກິນໄປໆດູກກວາງເລີຍຫັກຄາຢູ່ໃນແຂ້ວເສືອ ມັນໄດ້ຮັບຄວາມເຈັບປວດເປັນທຸກຫລາຍ ຈຶ່ງໄປຫານົກມະຣະຄຸດຕີ ອ້ອນວອນຂໍໃຫ້ນົກສັບດູກກວາງອອກໃຫ້ ແລະສັນຍາວ່າຈະລ້ຽງເກືອນົກຕົວນັ້ນ ທຸກໆທີ່ໄປຫາເບື້ອໄດ້ມາ ນົກມະຣະຄຸດຕີ ມີຄວາມສົງສານ ກໍສັບຕອດກະດູກອອກໃຫ້ ເສືອຈຶ່ງພົ້ນຈາກຄວາມເຈັບປວດເວທນາ.

ຢູ່ຕໍ່ມາ ເສືອໄປໄດ້ກວາງມາກິນອີກ ແຕ່ເສືອລືມຄວາມສັນຍານັ້ນເສັຽ ບໍ່ໃຫ້ນົກມະຣະຄຸດຕີກິນນຳ ນົກເຫັນດັ່ງນັ້ນ ຈຶ່ງຕໍ່ວ່າ: "ເອີຍ! ເສືອມຶງລືມຄຳສັນຍາແລ້ວຫລື? ເມື່ອມຶງໄດ້ຮັບຄວາມເຈັບປວດເນື່ອງຈາກກະ-ດູກກວາງຄາແຂ້ວ ມຶງໄດ້ວານໃຫ້ກູເອົາອອກໃຫ້ ບັດນີ້ມຶງໄດ້ກິນຊີ້ນທີ່ແຊບມຶງກໍກິນແຕ່ຜູ້ດຽວ ບໍ່ຫລຽວແລເບິ່ງກູຜູ້ມີຄຸນຕໍ່ມຶງເລີຍ" ເສືອໄດ້ຍິນຄຳນົກຈຶ່ງຕອບວ່າ: "ດູກ່ອນນົກນ້ອຍສົບແຫລມ ຈະມີປໂຍດອັນໃດນຳແມ່ງົວນົມທີ່ຮີດເອົານົມອອກໝົດແລ້ວ, ຈະມີປໂຍດອັນໃດນຳຕົ້ນໄມ້ທີ່ກິນໝ່ວຍໝົດແລ້ວ, ຈະມີປໂຍດອັນໃດນຳເຮືອ ໃນເມື່ອໄດ້ຂີ່ຂ້າມນ້ຳພົ້ນແລ້ວ, ສັນດຽວກັນກູກໍບໍ່ມີປໂຍດອັນໃດນຳມຶງ ໃນເມື່ອກູຫາຍເຈັບປວດແລ້ວ"

ນົກຄຽດ ຈຶ່ງຖຽງວ່າ: "ເອີຍ! ບັກອາສັດ(໑) ປຊີຍດຂອງແມ່ງົວນົມ ທີ່ບີບນ້ຳນົມອອກແລ້ວຍັງມີຢູ່, ຕົ້ນໄມ້ທີ່ຄົນກິນຜົນແລ້ວກໍຍັງຈະປົ່ງອີກເຮືອທີ່ຂີ່ຂ້າມນ້ຳແລ້ວ ກໍຍັງຈະໄດ້ຂີ່ກັບຄືນມາ, ມຶງຫາຍເຈັບປວດແລ້ວ - ເຫດໃດຈຶ່ງບໍ່ຄິດເຫັນຄຸນກູ"

ເສືອຕອບ: "ມຶງຮູ້ຢູ່ຕົວວ່າ ກູເປັນຜູ້ກິນສັດທີ່ມີຊີວິດທຸກຈຳພວກເປັນອາຫານ ການທີ່ກູໃຫ້ຊີວິດແກ່ມຶງ ໃນຂະນະທີ່ມຶງຢູ່ໃນຣະຫວ່າງແຂ້ວກູ

(໑) ອາສັດ = ຄວາມບໍ່ຊື່ດູ

ນັ້ນ ຈະບໍ່ແມ່ນບຸນຄຸນອີກຫລື?

ນົກຄຽດຫລາຍກ່າວວ່າ: "ບັກຊາດຊື່ວ! ມຶງບໍ່ເຫັນຄຸນກູແລ້ວ ກໍຕາມໃຈມຶງ ພາຍລຸນມຶງຫາກຈະໄດ້ເຫັນຣິດເດດຂອງກູດອກ"ວ່າແລ້ວກໍໜີໄປ

ນົກອາສະວະ ເລົ່ານິທານນີ້ໃຫ້ພວກສະຫາຍຟັງແລ້ວ ຈຶ່ງກ່າວເປັນຄຳພາສິດວ່າ: "ຜູ່ໃດໂອດອ້າງໂຕວ່າມີກຳລັງມາກ ແລ້ວບີບບີ້ຂົ່ມເຫງ-ຜູ່ມີກຳລັງໜ້ອຍ ຖ້າຜູ່ມີກຳລັງໜ້ອຍຫາກມີພຽງປັນຍາກໍສາມາດປາບແພ້ຜູ່ມີກຳລັງມາກແຕ່ບໍ່ມີປັນຍານັ້ນໄດ້ ດຸຈດັ່ງນົກມະຣະຄຸດຕີໄດ້ປາບແພ້ເສືອ ສັນນັ້ນ"

ກ່າວດັ່ງນີ້ແລ້ວສັດທັງ ໕ ຄື ນົກໄສ່, ກາ, ແມງວັນ, ກົບ, ແລະນົກຕອດຟຸ່ນ ກໍປຶກສາຕົກລົງກັນ: ໃຫ້ກາກັບນົກຕອດຟຸ່ນ ໄປລັກຕອດຕາຊ້າງໃນເວລານັ້ນນອນ; ຕາຊ້າງບາດແລ້ວໃຫ້ແມງວັນໄປຂີ້ໃສ່, ເມື່ອຮູ້ວ່າ ຕາບອດເພາະໜອນເຈາະແລ້ວ ຈຶ່ງໃຫ້ສະຫາຍກົບໄປຮ້ອງຢູ່ທີ່ປາກເຫວ; ຕາມອຸບາຍນີ້ຊ້າງກໍຈະເຖິງຄວາມພິນາດໄປເອງ. ເມື່ອຕົກລົງກັນແລ້ວ ສັດເຫລົ່ານັ້ນ ກໍໄປຈັດການກັບຊ້າງຕາມທີ່ໄດ້ນັດໝາຍກັນໄວ້ ພໍສົງເກດເຫັນວ່າຊ້າງຕາບອດທັງສອງຂ້າງແລ້ວ ສະຫາຍນົກທັງຫລາຍຈຶ່ງໄປບອກພະຍາກົບໃຫ້ພາບໍຣິວານໄປຮ້ອງຢູ່ທີ່ປາກເຫວ; ຊ້າງ ເຖົ້າຕາບອດອຶດຫຍ້າແລະນ້ຳມາໄດ້ຫລາຍວັນ ຄັນໄດ້ຍິນສຽງກົບຮ້ອງ ກໍເຂົ້າໃຈວ່າມີໜອງນ້ຳຢູ່ໃນທີ່ນັ້ນ ຈຶ່ງງົມງວຍ່າງໄປທີ່ປາກເຫວ ເລີຍພລາດຕົກລົງໄປໃນເຫວຕາຍ".

ໝາຈອກອະສຸພາຄະມຸນຕີ ເລົ່ານິທານໃຫ້ງົວນັນທະກະຟັງແລ້ວ ຈຶ່ງກ່າວຕໍ່ໄປວ່າ: "ຜູ່ມີກຳລັງໜ້ອຍ ແຕ່ມີຄວາມພຽນກ້າຫານບໍ່ທໍ້ຖອຍກໍສາມາດປາບແພ້ສັດຕູທີ່ມີກຳລັງມາກໄດ້ ດັ່ງນົກໄສ່ກັບຊ້າງສານ ສັນນັ້ນ, ສະນັ້ນເມື່ອຮູ້ວ່າ ຣາຊສີຈະທຳຮ້າຍທ່ານແນ່ແລ້ວ ທ່ານກໍຄວນຫາທາງປ້ອງກັນຕົວ"

ງິວັນທະກະ ຕອບ: "ຄຳທີ່ທ່ານແນະນຳມານີ້ກໍແມ່ນຢູ່ ແຕ່ຂໍໃຫ້ຟັງ: ຜູ່ໃດຈະມີປັນຍາຍອດຍິ່ງປານໃດກໍຕາມ ກໍບໍ່ສາມາດຫ້າມຄວາມຕາຍໄດ້ໃນເມື່ອມັນເຖິງ ດັ່ງດຽວກັບຊາຍໂຈນ ຊື່ ປະຕຸດຕະຣະ"

ອະສຸພາຄຍະ ຖາມ: "ເຣື່ອງມັນເປັນຢ່າງໃດ?"

ງິວັນທະກະ ເລົ່ານິທານ:

## ນິທານແອັມທີ ໒໑

## ເຣື່ອງ ຊາຍໂຈນກັບພາມ

ປາງກ່ອນໃນນະຄອນກຸນຊະຣະ ມີພາມຄົນນຶ່ງ ຊື່ ສວາມີ ຊາວເມືອງນັບຖືວ່າ ເປັນຜູ້ທີ່ຄວນນັບຖື ເພາະລາວຖືໝັ້ນໃນການບູຊາໄຟ ດັ່ງນັ້ນ ມີໂຈນຄົນນຶ່ງ ຊື່ ປະຕຸດຕະຣະ ມັນຢາກຮູ້ຈັກບ່ອນທີ່ຕົນຈະຕາຍ ຈຶ່ງໄປຖາມພາມສວາມີວ່າ: "ທ່ານພາມ ຂໍທ່ານໄດ້ກະຣຸນາບອກບ່ອນທີ່ຂ້າພະ-ເຈົ້າຈະຕາຍໃສ່ດ້ວຍ ວ່າ ຂ້າພະເຈົ້າຈະຕາຍໃນທີ່ໃດ?"

ພາມ ບອກ: "ຖ້າທ່ານຢາກຮູ້ຈັກບ່ອນຕາຍຂອງທ່ານ ທ່ານຈຶ່ງເຮັດຕາມຄຳແນະນຳຂອງຂ້າພະເຈົ້າ ຄື ໃນວັນແຮມ ໕ ຄ່ຳ ເມື່ອຄົນທັງຫລາຍເອົາຊາກຜີໄປຖິ້ມໃນປ່າຊ້າ ເວລາກາງຄືນທ່ານຈຶ່ງເອົາຊາກຜີນັ້ນ-ອອກ ແລ້ວເຂົ້າໄປນອນແທນບ່ອນຂອງຜີ ເມື່ອຜີມາຖາມ ທ່ານຈຶ່ງບອກວ່າທີ່ນີ້ເປັນບ່ອນນອນຂອງຂ້າ ດັ່ງນີ້ ຕໍ່ນັ້ນໄປຜີຫາກຈະບອກທ່ານເອງ."

ໂຈນໄປເຮັດຕາມຄຳແນະນຳຂອງພາມນັ້ນ ບໍ່ນານຜີຕົນນຶ່ງໄດ້ມາເຫັນໂຈນນອນຢູ່ໃນບ່ອນຂອງຕົນ ຈຶ່ງຖາມວ່າ: "ໃຜມານອນຢູ່ບ່ອນຂອງກູ

ໂຈນຖາມວ່າ: "ຊັ້ນບ່ອນຂອງຂ້າພະເຈົ້າຢູ່ໃສ?"

ຜີບອກວ່າ: "ທີ່ໃຕ້ຕົ້ນໄມ້ນິໂຄດ ອັນຢູ່ທາງເໜືອນະຄອນປາຕະລີ

-ບຸດ ພຸ້ນ! ເປັນບ່ອນຢູ່ຂອງມຶງ ມຶງຈຶ່ງໄປທີ່ນັ້ນເຖີ້ນ"

ໂຈນໄດ້ຮູ້ຈັກບ່ອນທີ່ຕົນຈະຕາຍໃສ່ຕາມຄຳບອກຂອງຜີດັ່ງນັ້ນແລ້ວ, ຕັ້ງແຕ່ນັ້ນມາ ກໍພະຍາຍາມຫລີກເວັ້ນບໍ່ໄປທາງເມືອງປາຕະລີບຸດຈັກເທື່ອ.

ວັນນຶ່ງໂຈນເດີນໄປໃນປ່າບ່ອນນຶ່ງດ້ວຍກິດທຸຣະແຕ່ງການໂຈຣະກັມ ມັນໄດ້ເຫັນນາງງາມຄົນນຶ່ງ ອັນມານນັດຈຸຣາດປອມເປັນມາ ຢູ່ໃນກາງປ່າ ນາງນັ້ນມີລັກສະນະງາມລ້ວນຖ້ວນທຸກປະການ ມີເລົາຄີງກົມດູຈດັ່ງລຳກ້ວຍ, ແຂວສ້ອຍຄືກ້ານສອຍ, ກະໂພກເຫວີ ປານທ້າຍເຮືອຊ່ວງ, ຕາດຳປອດປານມະຫານິນ, ນົມທັງສອງຕຶ່ງເຕັ່ມປານຈຸມຄ້ອງ, ດວງໜ້າຂາວບໍຣິສຸດດູຈດັ່ງ-ເດືອນເພັງ; ພໍໂຈນໄດ້ເຫັນນາງງາມດັ່ງນັ້ນ ກໍເຫລືອທີ່ຈະອົດກັ້ນຄວາມມັກໄວ້ໄດ້ ຈຶ່ງຖາມວ່າ: "ດູລານາງ ເຈົ້າເປັນລູກເຕົ້າເຫລົ່າກໍຂອງໃຜ ແລະ ເຫດໃດຈຶ່ງມາຢູ່ໃນປ່າແຕ່ຄົນດຽວ"

ນາງຕອບວ່າ: "ຂ້ອຍເປັນລູກພໍ່ຄ້າໃຫຍ່ຜູ້ຊື່ວ່າ ສຸປະຕິ ພໍ່ຂອງຂ້ອຍກັບບ່າວໄພ່ໄດ້ພາງມາຄ້າຂາຍທາງນີ້ ບັງເອີນພໍມາເຖິງປ່ານີ້ ກໍມີຣາຊສີຕົວນຶ່ງມາແລ່ນຜ່າ ພວກບ່າວໄພ່ ແລະ ພໍ່ຂອງຂ້ອຍພ້ອມທັງຂ້ອຍດ້ວຍ ແຕກຕື່ນຢ້ານຣາຊສີ ຕ່າງຄົນຕ່າງໜີເລີຍຫລົງກັນ ສ່ວນຂ້ອຍຫລົງມາທາງນີ້ຜູ້ດຽວ ສະນັ້ນຂໍໃຫ້ອ້າຍຊ່ວຍເຫລືອນ້ອງດ້ວຍ ນ້ອງບໍ່ມີທີ່ເພິ່ງແລ້ວ"

ຊາຍໂຈນໄດ້ຟັງດັ່ງນັ້ນແລ້ວ ມີຄວາມຍິນດີຫາທີ່ສຸດບໍ່ໄດ້ ຈຶ່ງຮັບເອົານາງມາເປັນພັນຣະຍາ ທັງສອງສົມສູ່ຢູ່ນຳກັນມາ ຈົນນາງໄດ້ລູກຄົນນຶ່ງ, ຕັ້ງແຕ່ວັນນາງອອກລູກມາ ນ້ຳຕາຂອງນາງໄຫລບໍ່ໄດ້ເຫືອດແກ້ມ ຜົວເຫັນອາການຂອງເມັຽຜິດປົກກະຕິ ຈຶ່ງຖາມວ່າ: "ນ້ອງທຸກໂສກສິ່ງໃດ ຈຶ່ງຮ້ອງໄຫ້ທຸກໆວັນ ຫລື ວ່າມີຄວາມຄຽດຊັງຄັ່ງແຄ້ນແນວໃດ?

ນາງຕອບວ່າ: "ຂ້າແຕ່ສາມີ ເຫດທີ່ນ້ອງຮ້ອງໄຫ້ນີ້ ຈະໄດ້ຄຽດຊັງບັງບຽດຕໍ່ໃດກໍຫາບໍ່ໄດ້ ແຕ່ວ່າ ເມື່ອກ່ອນແຕ່ຂ້ອຍຍັງບໍ່ທັນໄດ້ມາເປັນ-ເມັຽຂອງເຈົ້າ ຂ້ອຍໄດ້ທຳການບູຊາບະບົນເທວະດາຕົນນຶ່ງໄວ້ວ່າ ເມື່ອໄດ້ຜົວແລ້ວຂໍໃຫ້ໄດ້ລູກຜູ້ຊາຍກ່ອນ ບັດນີ້ ຄວາມປາຖນາຢາກໄດ້ລູກຜູ້ຊາຍນັ້ນສຳເຣັດແລ້ວ ແຕ່ຂ້ອຍຍັງບໍ່ທັນໄດ້ແກ້ບະ ເທວະດາ ຕາມທີ່ໄດ້ປະຕິຍານໄວ້ ຈຶ່ງມີຄວາມທຸກໂສກເປັນອັນມາກ ຂ້ອຍຄິດວ່າ ຖ້າບໍ່ໄດ້ທຳການບູຊາແກ້ບະນັ້ນແລ້ວ ແໜງຕາຍດີກວ່າ ເພາະເສັຽຄຳປະຕິຍານ"

ຜົວຖາມ: "ນາງປະຕິຍານຕໍ່ເທວະດາໃນຕົ້ນໄມ້ຕົ້ນໃດ?"

ເມັຽບອກ: "ຂ້ອຍໄດ້ປະຕິຍານຕໍ່ຫຸພອັດຕີອົງມີສັກດາຍິ່ງໃຫຍ່-ເຊິ່ງຢູ່ໃນພຸລີຫານທະ ໃກ້ນະຄອນປາຕະລີບຸດ ພຸ້ນ!"

ຊາຍໂຈນຜູ້ຜົວພໍໄດ້ຍິນຄຳວ່າ ເມືອງປາຕະລີບຸດ ກໍຂົນຄີງລຸກເຍືອກ ຟ້າວບອກເມັຽວ່າ: "ໂອຍເມືອງນັ້ນໄປບໍ່ໄດ້ດອກ ຖ້າໄປ ອ້າຍຕ້ອງຕາຍແນ່, ໄປບໍ່ໄດ້!"

ເມັຽຈຶ່ງອ້ອນວອນວ່າ: "ຖ້າບໍ່ພາໄປກໍຈະກັ້ນໃຈຕາຍເສັຽດຽວນີ້ລະ" ວ່າແລ້ວກໍຮ້ອງໄຫ້ສະອຶກສະອື້ນທຳອາການເໝືອນຈະຂາດໃຈຕາຍ.

ຝ່າຍປະດຸດຕະຣະ ເຫັນເມັຽຮ້ອງໄຫ້ຫລາຍຄິດເຫລືອຕົນ ຈຶ່ງຕັດສິນໃຈ ພາເມັຽໄປເມືອງປາຕະລີບຸດ ແຕ່ຕັ້ງໃຈໄວ້ວ່າ ຈະບໍ່ໄປທາງທິດເໜືອຂອງເມືອງ ພໍໄປເຖິງ ກໍພາເມັຽໄປເຊົາຢູ່ສາລານອກເມືອງທາງ-ດ້ານໃຕ້ ໃນຄືນຊາຍໂຈນພາເມັຽໄປນອນຢູ່ໃນສາລານັ້ນ ບັງເອີນແພະແມ່ລູກອ່ອນ ຂອງພຣະຍາເສັຽ ພວກຣາຊບຸຣຸດທັງຫລາຍນຳຊອກຫາ ພໍມາເຖິງສາລານອນຂອງຜົວເມັຽນອນຢູ່ນັ້ນ ກໍໄດ້ຍິນສຽງແພະຮ້ອງຢູ່ເທິງ...

ສາລາ ຈຶ່ງຂຶ້ນໄປເບິ່ງ ເລີຍເຫັນແພະແມ່ລູກອ່ອນນອນຢູ່ຂ້າງຊາຍໂຈນ ພວກອາຊຸບຸຣຸດເຂົ້າໃຈວ່າ ຊາຍຄົນນັ້ນເປັນຂະໂມຍລັກແພະ ຈຶ່ງຈັບໄປຖວາຍພຣະຣາຊາ ແລ້ວພຣະຣາຊາກໍຕັດສັ່ງໃຫ້ເພັຊຄາດເອົາໂຈນນັ້ນ ໄປປະຫານເສັຽທີ່ໄດ້ຕົ້ນໄມ້ນິໂຄດອັນຢູ່ທາງທິດເໜືອແຫ່ງນະຄອນປາຕະລີບຸດນັ້ນເອງ.

ເມື່ອໂຈນປະຕຸດຕະອະຈະຖືກປະຫານ ໄດ້ຮໍາເພິງໃນໃຈວ່າ:

"ກິຍາອາການລະຖານທີ່ອັນກູຈັກຕາຍໃສນີ້ ອາຈານໄດ້ບອກກູແລ້ວທຸກປະການ ແທ້ຈິງ ເມື່ອກັມມາເຖິງແລ້ວ ບໍ່ມີໃຜຈະຫລີກໜີໄປໄດ້" ເມື່ອໂຈນຮໍາເພິງດັ່ງນີ້ແລ້ວ ກໍຖືກອາຊຸບຸຣຸດປະຫານເສັຽ.

ເພາະດັ່ງນັ້ນ ຂ້າພະເຈົ້າ(ບັນທະກະ) ຈຶ່ງວ່າ "ຜູ່ໃດບໍ່ສາມາດທີ່ຈະຫ້າມຄວາມຕາຍໄດ້ ໃນເມື່ອມັນມາເຖິງແລ້ວ"

ອະສຸພາຄຍະ ຄັດຄ້ານ: "ເຖິງຈັ່ງຊັ້ນກໍຄວນຫາອຸບາຍປ້ອງກັນຕົວໄວ້ກ່ອນ ເພາະຜູ່ທີ່ນອນຖ້າຕາຍໂດຍບໍ່ຄິດຫາອຸບາຍແກ້ ຜູ່ນັ້ນເປັນຄົນໂງ່ດັ່ງດຽວກັບປາຕົວຊື່ວ່າ ຍະທັກຄະວິໄສ ນອນຖ້າຕາຍ ຈຶ່ງຖືກນາຍພານແຫເອົາຕົວໄປກິນເສັຽ ສ່ວນປາ ອະນາຄະຕະວິທາຕາ ແລະ ປັດຈຸບັນນະມະຕິ ພົ້ນໄພໄປໄດ້"

ບັນທະກະ ຖາມ: "ເຣື່ອງເປັນຢ່າງໃດ?"

ອະສຸພາຄຍະ ເລົ່ານິທານ:

ນິທານແອ້ມທີ ໑໔

ເຣື່ອງ ປາສາມຕົວ

ແຕ່ກ່ອນມີປາຄີໃຫຍ່ສາມຕົວເປັນສະຫາຍກັນ ຕົວນຶ່ງຊື່ ອະນາຄະຕະວິທາຕາ ຕົວນຶ່ງ ຊື່ ປັດຈຸບັນນະມະຕິ ອີກຕົວນຶ່ງຊື່ ຍະທັກຄະວິໄສ....

ອາໄສຢູ່ໃນໜອງດຽວກັນ ປີນຶ່ງເກີດແລ້ງ ພວກຊາວບ້ານຈະພາກັນມາຫາປາໃນໜອງນັ້ນ ປາຕົວຊື່ວ່າ ອະນາຄະຕະວິທາຕາ ຮູ້ວ່າຊາວບ້ານຈະມາຫາປາ ຈຶ່ງເວົ້າບໍລິສະຫາຍທັງສອງວ່າ: "ດູລາສະຫາຍ ຖ້າເຮົາຍືນຢູ່-ໃນໜອງນີ້ຕໍ່ໄປ ຄວາມຕາຍຈະມາເຖິງພວກເຮົາໃນວັນຮຸ່ງເຊົ້ານີ້ເປັນແນ່ ສະນັ້ນ ເຮົາຄວນຍ້າຍຈາກໜອງນີ້ເສັຽໃຫ້ພົ້ນໄພ" ປາຕົວຊື່ວ່າ ປັດຈຸ-ປັນນະມະຕິ ກ່າວວ່າ: "ເມື່ອໃດອັນຕາຍຫາກມາເຖິງແທ້ ຈຶ່ງຄ່ອຍຈັດການແກ້ໄຂ ເພາະເພິ່ນວ່າ: ຜູ້ໃດແກ້ໄຂຄວາມຫາຍະນະ ເຊິ່ງເກີດຂຶ້ນໄດ້ ຜູ້ນັ້ນເປັນຜູ້ສລາດ ເໝືອນພະຣິຍາພໍ່ຄ້າປະຕິເສດຊາຍຊູ້ໄດ້ຕໍ່ໜ້າຜົວ, ສັນນັ້ນ"

ປາ ຍະທັກຄະວິໄສ ຖາມ: "ເຣື່ອງເປັນຢ່າງໃດ?"

ປາ ປັດຈຸປັນນະມະຕິ ເລົ່ານິທານ:

ນິທານແອັນທີ ໑໙

ເຣື່ອງພະຣິຍາພໍ່ຄ້າປະຕິເສດຊາຍຊູ້ຕໍ່ໜ້າຜົວ

ໃນນະຄອນວິກົມບູຣີ ມີພໍ່ຄ້າຊື່ ສມຸທທັດ ມີພະຣິຍາ ຊື່ ນາງຣັຕນະປະພາ ນາງມັກຫລິ້ນຊູ້ກັບຄົນໃຊ້ສເມີ ມື້ນຶ່ງ ສມຸທທັດ ເຫັນເມັຽກໍາລັງກອດຈູບຊູ້ທີ່ເປັນຄົນໃຊ້ຢູ່ ແລະ ທັນທີນັ້ນ ນາງກໍຈາກຊູ້ ຟ້າວຍ່າງມາຫາຜົວ ແລ້ວເວົ້າວ່າ: "ນາຍ! ຄົນໃຊ້ຄົນນີ້ມີພຶດຫລາຍ ມັນກິນກາ-ລະບູນ ທີ່ເຂົາເອົາໃຫ້ເຈົ້າເສັຽໝົດ ຂ້ອຍດົມປາກມັນມີແຕ່ກິ່ນກາລະບູນ"

ຝ່າຍຄົນໃຊ້ໄດ້ຍິນຈັ່ງຊັ້ນກໍພິຕົກຄຽດ ກ່າວວ່າ: "ຄົນໃຊ້ຈະຢູ່ເຮືອນນາຍຜູ້ມີເມັຽເປັນຈັ່ງຊີ້ໄດ້ລື! ເພາະເມັຽເພິ່ນຈອບດົມປາກຄົນໃຊ້ຢູ່ສເມີ ກົນອັນໃດກໍຊູ້" ເມື່ອເປັນດັ່ງນີ້ ຜົວເຊິ່ງເປັນສາທຸຊົນ ກໍຈໍາເປັນ

ໄດ້ຂໍໂທດຄືນໃຊ້ ແລະອ້ອນວອນໃຫ້ມັນຢູ່ນຳຕໍ່ໄປ.

ເພາະສະນັ້ນ ຂ້າພະເຈົ້າຈຶ່ງວ່າ (ປາປັດຈຸປັນນະມະຕິເວົ້າ) : "ຜູ້ໃດແກ້ໄຂຄວາມຫາຍະນະ ເຊິ່ງເກີດຂຶ້ນແລ້ວໄດ້ ຜູ້ນັ້ນເປັນຄົນສລາດ"

ປາຍະທັກຄະອິໄລ ຄັດຄ້ານວ່າ : "ສິ່ງທີ່ບໍ່ມີ ກໍບໍ່ມີຂຶ້ນໄດ້ ຖ້າມີ ກໍຕ້ອງມີຈົບໄດ້ ເມື່ອຄວາມຕາຍມາເຖິງແລ້ວ ແມ່ນໃຜຈະຫລີກໄດ້ ຂ້າພະເຈົ້າເຫັນດັ່ງນີ້ ຈຶ່ງບໍ່ມີຄວາມວິຕົກ" ເວົ້າກັນດັ່ງນີ້ແລ້ວ ຮຸ່ງເຊົ້າມາຊາວບ້ານກໍພາກັນມາລົງໜອງ ປາຕົວຊື່ອະນາຄະຕະວິທາຕາ ລັດລອຍໜີໄປໄດ້ແຕ່ໃນເວ-ລາກາງຄືນ ປາຕົວຊື່ປັດຈຸປັນນະມະຕິ ຖືກພານແຫຕຶກໄດ້ ມັນກໍພິຕິຕາຍນາຍພານແຫຈຶ່ງຈັບໂຍນໄປໄວ້ໃກ້ໆຝັ່ງໜອງໃຫຍ່ ພໍລັບຕານາຍພານແຫມັນຈຶ່ງດີ້ນ ແລະເຕັ້ນລົງໜອງໃຫຍ່ໄປເລີຍ ສ່ວນປາຕົວຊື່ວ່າ ຍະທັກຄະອິໄລ ບໍ່ຄິດຫາອຸບາຍເອົາຕົວລອດ ເລີຍຖືກພານແຫຈັບໄດ້ເອົາໄປຕົ້ມແກງກິນເສັງ.

ເພາະສະນັ້ນ ຂ້າພະເຈົ້າ (ອະສຸພາຄຍະ) ຈຶ່ງວ່າ : ຜູ້ທີ່ນອນຖ້າຕາຍ, ໂດຍບໍ່ຄິດຫາອຸບາຍແກ້ ຜູ້ນັ້ນເປັນຄົນໂງ່.

ອະສຸພາຄຍະ ເວົ້າຕໍ່ໄປວ່າ : "ສິ່ງທີ່ໜ້າຢ້ານທີ່ສຸດ ມີ ໒ ປະການ, ຄື ສາຍຟ້າຟາດ ແລະ ອຳນາດຂອງພຣະຣາຊາ ; ແຕ່ສາຍຟ້າຍ່ອມຟາດລົງ-ແຕ່ບ່ອນດຽວ ສ່ວນອຳນາດຂອງພຣະຣາຊາ ຍ່ອມຟາດໄປທົ່ວທຸກແຫ່ງ ເມື່ອເປັນດັ່ງນີ້ ຄວາມຕາຍໃນການຕໍ່ສູ້ນັ້ນແຫລະເປັນຂອງຄວນ ການຍອມຕາຍຕາມອາດຍາຂອງເຂົານັ້ນ ບໍ່ຄວນເລີຍ ເພາະວ່າ ໃນກາລະໃດເມື່ອບໍ່ສູ້ຕ້ອງຈົບຫາຍແນ່ ແຕ່ເມື່ອສູ້ຍັງມີທາງເອົາຕົວພົ້ນ ກາລະນັ້ນ ນັກປາດທັງຫລາຍລົງຄວາມເຫັນວ່າ ຕ້ອງສູ້ຢ່າງແນ່ນອນ.

ເມື່ອໃດນັກປາດບໍ່ເຫັນປໂຍດອັນຈະເກີດແກ່ຈິນຍ້ອນການຕໍ່ສູ້ ເມື່ອນັ້ນ

ເພີ່ນກໍຍອມຕາຍໃນເມື່ອຕໍ່ສູ້ກັບສັດຕູ;

ໃນການຕໍ່ສູ້ ຖ້າມີໄຊກໍໄດ້ລາບພືນ ຖ້າຕາຍກໍໄດ້ໄປຊົມສາວສວັນ ເມື່ອເຫັນວ່າຮ່າງກາຍເປັນຂອງແຕກດັບໄດ້ໃນຍາມນຶ່ງຍາມດຽວແລ້ວ ຈະມານຶກຄິດເຮັດພີສັງ ເຖິງຄວາມຕາຍໃນການຣົບພະຣິງ (ການສົງຄາມ)"

ງົວບັນທະກະ ໄດ້ຟັງດັ່ງນັ້ນ ຈຶ່ງຖາມອະນຸພາຄຍະວ່າ: "ຈະຮູ້ໄດ້ຢ່າງໃດວ່າ ຣາຊສີຕ້ອງການປະຫານຂ້າພະເຈົ້າແທ້"

ອະນຸພາຄຍະ ຕອບ: "ເມື່ອໃດເຫັນຣາຊສີກາງຫູອອກ ຍົກຫາງຂຶ້ນ ອ້າປາກກວ້າງ ຂຍາຍເລັບ ແລະຫລຽວເບິ່ງຢ່າງບໍ່ພັບຕາ ເມື່ອນັ້ນແຫລະທ່ານຈະຮູ້ໄດ້ ຢ່າງໃດກໍດີ ເຣື່ອງທັງໝົດນີ້ທ່ານຕ້ອງປິດບັງໃຫ້ດີ ຢ່າໃຫ້ຮື່ວໄດ້ ບໍ່ດັ່ງນັ້ນ ຂ້າພະເຈົ້າ ແລະ ທ່ານ ຈະພາກັນພິນາດພົດ ເພາະສະນັ້ນ ເວລາທ່ານເຂົ້າໄປຫາຣາຊສີ ຕ້ອງລະວັງ ຕັ້ງທ່າຕໍ່ສູ້ໄວ້ສເມີ." ວ່າແລ້ວ ນາຈອກອະນຸພາຄຍະ ກໍລາໄປ.

ວັນນຶ່ງອະນຸພາຄຍະເຂົ້າໄປຫາຣາຊສີ ແລ້ວກ່າວວ່າ: "ຂ້າແຕ່ຣາຊາ ຖ້ອຍຄຳອັນເປັນປໂຍດ ຜູ້ເວົ້າຈະເປັນຄົນຊັ້ນຕ່ຳສາມານ ກໍຕາມ ຜູ້ມີປັນຍາກໍຄວນຟັງ ແລະ ຂັບຕາມ ພຣະຍາເກໄກຣາດພົ້ນຈາກຄວາມຕາຍກໍຍ້ອນຟັງຄຳຂອງແພະໃດ໋!"

ຣາຊສີ ຖາມ: "ເຣື່ອງເປັນຢ່າງໃດ?"

ອະນຸພາຄຍະ ເລົ່ານິທານ:

ນິທານແອັນທີ ໑໔

ເຣື່ອງພຣະຍາເກໄກຣາດ

---

ປາງກ່ອນ ມີພຣະຣາຊານາມວ່າ ເກໄກຣາດ ສເວີຍຣາຊສົມບັດ

ຢູ່ໃນນະຄອນນາຄຸລະ ພຣະອົງທົງທົສຣາຊທັມຍິ່ງນັກ ນັກປອມພຣະອົງໄປທ່ຽວ
ເບິ່ງຂົງເຂດບ້ານເມືອງຂອງຕົນສເມີ ເພື່ອຈະໄດ້ຮູ້ຄວາມສຸກທຸກຂອງໄພ່ຟ້າ-
ປະຊາກອນ.

ວັນນຶ່ງ ພຣະອົງປອມຕົວສະເດັດໄປລຽບເບິ່ງພຣະນະຄອນ ພໍເຖິງ
ທີ່ນ້ອຍທີ່ນຶ່ງ ໄດ້ທອດພຣະເນດເຫັນລູກສາວພຣະຍານາກກັບເພດເປັນງູຂຶ້ນມາ
ຫລິ້ນຊູ້ຢູ່ກັບງູດາງແຕຕົວນຶ່ງ ພຣະຣາຊາຈຶ່ງຮຳເພິງວ່າ ນາງນາກເປັນຣາຊ-
ບຸດຕີ ບັດນີ້ມາເສບສົມກັບງູດາງແຕ(໑) ອັນເປັນງູຊາດສະກຸນຕ່ຳ ບໍ່ເປັນ
ການສົມຄວນເລີຍ ຮຳເພິງແລ້ວ ກໍຖອດດາບອອກຟັນງູດາງແຕຕາຍ ສ່ວນ
ນາງນາກ ພຣະອົງພຽງແຕ່ເອົາໄມ້ແສ້ຟາດບາດນຶ່ງແລ້ວກໍປ່ອຍໃຫ້ໜີໄປ ຝ່າຍ
ນາງນາກມີຄວາມເຈັບປວດ ກໍຄຶດອາຄາດພຣະຍາ ຈຶ່ງໜີໄປສັບສໍ່ຕໍ່ບິດາວ່າ:
"ຂ້າແຕ່ພຣະບິດາ ວັນນີ້ ຂ້ານ້ອຍຂຶ້ນໄປຫລິ້ນເມືອງນາຄຸລະ ພຣະຍາໂກໄກ-
ຣາດ ພຣະເຈົ້າແຜ່ນດິນເມືອງນັ້ນ ເປັນຄົນອາທັມ ມາເຫັນຂ້ານ້ອຍມັນກໍຢາກ
ໄດ້ໄປເປັນເມັຽ ເມື່ອຂ້ານ້ອຍບໍ່ຍິນຍອມໄປຕາມຄວາມປະສົງຂອງມັນ ມັນຈຶ່ງ
ຕີຂ້ານ້ອຍເສັຽເກືອບຕາຍ" ວ່າແລ້ວກໍຮ້ອງໄຫ້ສະແດງຄວາມເສັຽໃຈເປັນອັນ
ມາກ. ສ່ວນພຣະຍານາກ ບໍ່ທັນໄດ້ພິຈາຣະນາ ກໍຄຶດຄຽດ ໃຫ້ພຣະຍາ
ໂກໄກຣາດ ພໍເຖິງກາງຄືນຈຶ່ງກັບເພດເປັນງູນ້ອຍຕົວນຶ່ງ ລອຍເຂົ້າໄປໃນຕາ
-ສາດ ນອນຂົດຢູ່ໃຕ້ຕຽງບັນທົມຂອງພຣະຣາຊາ ດ້ວຍເຈຕນາວ່າ ເມື່ອພຣະ
ຣາຊານອນຫລັບແລ້ວຈຶ່ງຈະຕອດໃຫ້ຕາຍ ຂນະນັ້ນພຣະຣາຊາໂກໄກຣາດ ກໍາ
ລັງສໍາຣາບພຣະໄຫຍ່ກັບນາງຣາຊເທວີ ພຣະນາງເທວີຖາມພຣະຣາຊາວ່າ:

---

(໑) ສະບັບນຶ່ງວ່າ ງູໂອງນ້ວ

"ວັນນີ້ ພຣະອົງສະເດັດລຽບພຣະນະຄອນ ໄດ້ເຫັນເຫດການສິ່ງໃດເປັນ-ອັນປລາດແດ່?" ພຣະຣາຊາຕັດຕອບວ່າ: "ພຣະອົງໄດ້ເຫັນງູດາງແຫນ້ອຍຕົວນຶ່ງ ຊຶ່ງເປັນສັດຊາດດຸ່ອຍຮ້າຍ ເສບສົມກັບລູກສາວພຣະຍານາກ ຜູ້ມີສະກຸນສູງ ກູພຣະອົງຈຶ່ງຟັນງູດາງແຫນັ້ນເສັຽ ເພາະມັນບໍ່ຈັກພາວະຂອງ-ຕົນ ສ່ວນລູກສາວພຣະຍານາກ ກູພຣະອົງຕີເສັຽບາດນຶ່ງ ເພາະມັນປະ-ພຶດບໍ່ສົມຄວນກັບຊາດສະກຸນຂອງຕົນ."

ພຣະຍານາກ ນອນຢູ່ໃຕ້ຕຽງບັນທົມ ໄດ້ຍິນພຣະຣາຊາຈາຣະຈາກັບນາງເທວີດັ່ງນັ້ນ ກໍໄດ້ສະຕິຄິດວ່າ ພຣະຣາຊາອົງນີ້ ທົງປະພຶດຢູ່ໃນທົສຣາຊທັມຍິ່ງນັກ ກູຟັງແຕ່ຄຳສັບສໍ່ຂອງລູກຜູ້ອາທົມ ບໍ່ພິຈາຣະນາ ເກືອບຈະທຳພຣະຣາຊາຜູ້ທະຣົງຄຸນໃຫ້ພິນາດ ຄິດດັ່ງນີ້ແລ້ວຈຶ່ງອອກຈາກພາສາດກັບຄືນມາຍັງເມືອງນາກ ຮຽກລູກສາວຂອງຕົນມາຖາມ ເມື່ອນາງນາກ ຜູ້ບຸດຕີຮັບເປັນສັດ ຈຶ່ງຕັດກຳຮານນາບດ່າລູກສາວຂອງຕົນເປັນອັນມາກແລ້ວຂັບໜີຈາກພຣະນະຄອນນາກບາດານ ພຣະຍານາກຂັບລູກສາວໜີໄປແລ້ວຈຶ່ງມາຄິດວ່າ ພຣະຍາເກໄກຣາດອົງນີ້ຊົງປະພຶດຊອບທຳຊທັມຍິ່ງນັກ ຄວນເຮົາຈະຕອບແທນບຸນຄຸນໃຫ້ສົມແກ່ເຫດ ຄິດແລ້ວພຣະຍານາກຈຶ່ງແປງເພດເປັນບຸຣຸດມານັ່ງຫລົບຢູ່ທີ່ມົນດົບ ບ່ອນລູກສາວຂອງຕົນເຄີຍມາ ໃນວັນນັ້ນພຣະຍາເກໄກຣາດ ປອມພຣະອົງສະເດັດໄປລຽບພຣະນະຄອນຕາມເຄີຍ, ພໍມາເຖິງມົນດົບ ເຫັນຊາຍຄົນນຶ່ງມີອາການປລາດນັ່ງຢູ່ ຈຶ່ງຕັດຖາມວ່າ: "ທ່ານມາແຕ່ໃສ ເຫດໃດຈຶ່ງມານັ່ງຢູ່ທີ່ນີ້?" ພຣະຍານາກຕອບວ່າ: "ຂ້າ-ພະເຈົ້າເປັນນາຄຣາດ ບິດາຂອງນາງນາກມານະວິກາ ທີ່ມາທຳຣະນາ-ຈານຢູ່ໃນທີ່ນີ້ ພຣະອົງໄດ້ທົງພ່ຳເພັງປໂຍດແກ່ກະກູນນາຄຣາດ.......

ເປັນອັນມາກ ຂ້າພະເຈົ້າມານີ້ ກໍຫວັງຈະສນອງຄຸນຂອງພຣະອົງ ພຣະອົງມີພຣະປະສົງສິ່ງໃດຈຶ່ງບອກມາ"

ພຣະຣາຊາເກໂກຣາດຕັດຕອບວ່າ: "ອັນພຣະຣາຊາດັ່ງຕົວຂ້ານີ້ ທີ່ຈະທຸກໃຮ້ຂືນໃຈດ້ວຍຊັບສົມບັດນັ້ນ ບໍ່ມີເລີຍ ເມື່ອທ່ານປະສົງຢາກຈະໃຫ້ສິ່ງໃດສິ່ງນຶ່ງແກ່ຂ້າພະເຈົ້າ ກໍຂໍໃຫ້ທ່ານບອກມົນອັນຮູ້ຈັກອັທຍາໄສໃຈຄໍຂອງສັດທັງ-ຫລາຍທີ່ເວົ້າຈາກັນນັ້ນເຖີດ" ພຣະຍານາກຕອບວ່າ: "ໄດ້! ແຕ່ພຣະອົງຕ້ອງຮັກສາຄວາມສັດ ຢ່າບອກໃຫ້ຜູ້ໃດຜູ້ນຶ່ງຮູ້ນຳເປັນອັນຂາດ ຖ້າພຣະອົງບອກເວລາໃດ ເວລານັ້ນພຣະອົງຕ້ອງຕາຍ" ເມື່ອພຣະຍາເກໂກຣາດຮັບປະຕິຍານວ່າ ຈະຮັກສາຄວາມສັດໄວ້ໄດ້ແລ້ວ ພຣະຍານາກກໍສອນມົນສັດຕອະ-ວາກຍະມະຕິ ໃຫ້.

ສໃນນຶ່ງ ພຣະຣາຊາເກໂກຣາດຕັດສັ່ງຂ້າໃຊ້ໃຫ້ແປງສະຖານທີ່ປະທັບສຳຮານໃນເດີ່ນພຣະຣາຊວັງ ກໍ່ດ້ວຍດິນຈີ່ ແລະ ໄລ້ທາດ້ວຍຂີ້ໂອ ທຳເປັນລານກ້ຽງດີ ແລ້ວໃຫ້ທານເອົາຕຽງໃຫຍ່ມາຕັ້ງໄວ້ທີ່ນັ້ນ ເທິງຕຽງປູລວາດດ້ວຍອາສນະອັນວິຈິດ ແລ້ວພຣະຣາຊາກັບພຣະມະເຫສີ ຈຶ່ງຂຶ້ນໄປສະຖິດບັນທົມຢູ່ເທິງຕຽງນັ້ນ ອັນພາຍໃຕ້ບ່ອນຕັ້ງຕຽງນັ້ນ ເປັນບ່ອນຢູ່ຂອງຝູງ-ມົດງ່າມ ບ່ອນປາກຮູມົດນັ້ນ ບ່າວພຣະຣາຊາເອົາດິນອັດເສັຽ ແລ້ວເອົາຂາຕຽງຕັ້ງເຕັງໄວ້ ມົດຈະເຂົ້າອອກບໍ່ໄດ້ ຄາວນັ້ນ ມົດພວກໄປຫາກິນ ກັບຄືນມາ ເຂົ້າຮູບໍ່ໄດ້ ຈຶ່ງຮ້ອງບອກພວກມົດທີ່ຢູ່ໃນຮູໃຫ້ເຈາະຮູໃຫ້ ສ່ວນພວກມົດທີ່ຢູ່ທາງໃນ ຈຶ່ງຮ້ອງບອກອອກມາວ່າ: "ພວກສູມີຫລວງຫລາຍພອຍມາກຈຶ່ງພ້ອມກັນຫາມຕຽງພຣະຍາອອກ ແລ້ວພາກັນເຂົ້າມາເຖີດ"

ພຣະຍາບັນທົມຢູ່ເທິງຕຽງ ໄດ້ຍິນສຽງມົດເວົ້າກັນດັ່ງນັ້ນ ກໍຍິນ

ອັສຈັນໃຈອ່ງ ນິດຕິວນ້ອຍໆເຫດສັນໃດຈິ່ງມາສະຫາວຈາວ່າ ຈະຫານຕຽງ ກູໄປຖິ້ມໄດ້ ເປັນໜ້າຢາກຫົວຫລາຍ ຄຶດແລ້ວພຣະຍາກໍເລີຍຫົວຂຶ້ນພິດແຮງ ນາງເທວີບັນທົມຢູ່ຂ້າງພຣະຣາຊາ ໄດ້ຍິນພຣະຣາຊາຫົວຂຶ້ນພິດແຮງດັ່ງນັ້ນ ກໍສົງໄສຈຶ່ງທູນຖາມວ່າ: "ເທວະ ພຣະອົງຫົວຂວັນອີສັງ?" ພຣະຣາຊາ ຕອບວ່າ: "ບໍ່ຫົວຂວັນສັງດອກ ຄຶດຢາກຫົວກໍຫົວຊື່ໆນີ້ແຫລະ" ນາງເທວີ ຍິ່ງສົງໄສ ທູນໄຫວ້ວອນວ່າ: "ບໍ່ມີເຫດອັນໃດອັນນຶ່ງພຣະອົງຄົງບໍ່ຫົວເປັນ ແນ່ ພຣະອົງຄົງໄດ້ເຫັນຄວາມບໍ່ດີບໍ່ງາມໃນຕົນຕົວຂອງຂ້າພຣະບາດ ຫລື ຄຶດເຫັນຄວາມຜິດພາດອັນໃດອັນນຶ່ງຂອງຂ້ານ້ອຍເປັນແນ່ ຈຶ່ງຫົວຂວັນ" ພຣະຣາຊາ: "ບໍ່ມີສັງດອກ ເຮົາບໍ່ໄດ້ຫົວຂວັນນາງເລີຍ" ນາງເທວີ: "ຊັ້ນ! ພຣະອົງຫົວຂວັນໃຜ ເພາະຢູ່ໃນທີ່ນີ້ ມີແຕ່ຂ້ານ້ອຍກັບພຣະອົງເທົ່ານັ້ນ ຖ້າພຣະອົງບໍ່ບອກເຫດທີ່ພາໃຫ້ຫົວຂວັນໃນຄາວນີ້ ຂ້ານ້ອຍຈະຢູ່ຮ່ວມບາທາ ຂອງພຣະອົງບໍ່ໄດ້ ເພາະຄຶດອາຍໃຈ ເຫດສັນໃດເປັນຕົວເນັ່ງກັນ ຈະ ບອກເຫດພຽງທີ່ນີ້ບໍ່ໄດ້" ວ່າແລ້ວນາງເທວີກໍສະແດງອາການເສົ້າໂສກ – ແລະຮ້ອງໄຫ້ສະອຶກສະອື້ນ. ພຣະຣາຊາເຫັນນາງເທວີຮ້ອງໄຫ້ ຈຶ່ງເລົ່າ ໂລມວ່າ: "ດູລານາງ ເຫດທີ່ພີ່ໃຫ້ເຮົາພີ່ຫົວນັ້ນມີຢູ່ ແຕ່ເຮົາພີ່ບອກບໍ່ໄດ້, ຖ້າບອກພີ່ຕ້ອງຕາຍ" ນາງເທວີໄດ້ຟັງດັ່ງນັ້ນແຮງຈົບແສບ ແລະ ຢາກ ຮູ້ຫລາຍກວ່າເກົ່າ ຈຶ່ງສະແດງຄວາມໂສກເສົ້າເສັຽໃຈໜັກຂຶ້ນ ພ້ອມກັບທູນ ວ່າ: "ຖ້າພຣະອົງບໍ່ບອກ ຂ້ານ້ອຍກໍຈະກັ້ນໃຈຕາຍເສັຽອັນນີ້"

ພຣະຣາຊາເລົ່າໂລມນາງເທວີຈົນສຸດກໍາລັງ ກໍບໍ່ເຊົາໃຫ້ນາງ ຫາຍຄວາມໂສກເສົ້າເສັຽໃຈໄດ້ ຈຶ່ງຮໍາເພິງໃນພຣະໄທວ່າ: "ອັນກິຍາທີ່ ທໍາໃຫ້ຜູ້ອື່ນຕ້ອງໄດ້ຮັບຄວາມໂສກເສົ້າເຖິງຕາຍນັ້ນ ບໍ່ສົມຄວນແກ່ກູຜູ້ເປັນ

ພຣະຣາຊາທັນນິກະຣາດເລີຍ ແພງກູຕາຍເສັຽດີກວ່າ" ຮໍາເພີງດັ່ງນີ້ແລ້ວ ຈຶ່ງຕັດກັບນາງເທວີວ່າ: "ດູລານາງ ເຮົາພີ່ໄດ້ບອກແລ້ວວ່າ ເຫດທີ່ພາໃຫ້ເຮົາຫົວນີ້ ຖ້າເຮົາບອກ ເຮົາພີ່ຕ້ອງຕາຍ ບັດນີ້ ຖ້າເຮົາບໍ່ບອກ ນາງກໍຈະກັ້ນໃຈຕາຍ ສະນັ້ນ ກູພີ່ຈຶ່ງຕົກລົງໃຈວ່າ ແພງຕົນຕາຍດີກວ່າ ຂໍໃຫ້ນາງຢູ່ເຖີດ ແຕ່ພີ່ຂໍໄວ້ພໍໃຫ້ຮອດມື້ເຊົ້າກ່ອນ ເມື່ອພີ່ໄດ້ຈັດການໃຫ້ທານແກ່ສະມະນະພາມມະນາຈານ ແລະລໍ້າລາຍາດຕິພີ່ນ້ອງໝົດແລ້ວ ພີ່ຈະບອກໃຫ້ນາງຮູ້, ແລ້ວພີ່ກໍຈະຕາຍຈາກນາງໄປ.

ຕື່ນເຊົ້າມາ ພຣະຍາເກໂກຣາດ ຕັດສັ່ງໃຫ້ອາມາດຣາຊເສນາຫ້າງຊ້າງໃຫ້ ແລ້ວສະເດັດຂຶ້ນຂີ່ຊ້າງລຽບພຣະນະຄອນມາຕຸລະເປັນຄາວສຸດທ້າຍ ພໍໄປເຖິງຍ່ານບຶ່ງ ໄດ້ທອດພຣະເນດເຫັນແພະຕົວເມັຽກິນຫຽ້າ ຢູ່ແຄມປາກສ້າງຮ້າງອັນເລິກ ແພະຕົວເມັຽເວົ້ານຳຕົວຜົວວ່າ: "ດູລາເຈົ້າ ຂ້ອຍທົງຄັບທ້ອງແກ່ແລ້ວ ບັດນີ້ຂ້ອຍຢາກກິນຫຽ້າອ່ອນທີ່ຢູ່ໃນໂກນສ້າງນັ້ນ ຂໍເຈົ້າຈຶ່ງໄປເອົາມາໃຫ້ຂ້ອຍກິນແດ່ ຖ້າຂ້ອຍບໍ່ໄດ້ກິນຫຽ້ານັ້ນຂ້ອຍກັບລູກໃນທ້ອງຄົງຕາຍແນ່" ແພະຕົວຜູ້ຕອບວ່າ: "ອີ່ຊື່ອ! ກົງການອີສັງມຶງມາແອ່ວອອນກູ ໃນທີ່ບໍ່ຄວນ ສັນນີ້ ຖ້າກູໄປເອົາຫຽ້າໃນບ່ອນຫັ້ນຕາມຄວາມມຶງ ບໍ່ຫລ້າງວ່າ ກູຈັກຕົກສ້າງຄໍຫັກຕາຍ ສາບໍ້! ແລ້ວໂລກທັງຫລາຍກໍຈະໄດ້ຕິຕຽນທານຂວັນກູວ່າຜູ່ຊາຍໃບ້ງ່າວ ຕາຍຍ້ອນເມັຽ ສະນັ້ນຫລື? ກູບໍ່ໄປດອກ ມຶງນີ້ກາລະຂີນີຫລາຍ ມຶງຢາກຕາຍຈຶ່ງຕາຍເສັຽ ແມ່ແພະໜຸ່ມໆ ຈົບງາມດີກວ່າມຶງ ຍັງມີຢູ່ມາກ ກູຈະເອົາສັກຮ້ອຍຕົວມາປິ່ນປົວກໍໄດ້ ກູບໍ່ແມ່ນຜູ້ໃບ້ງ່າວຄື ພຣະຍາເກໂກຣາດ ທີ່ຕົກຢູ່ໃຕ້ອຳນາດຂອງຜູ້ຍິງ ແລະ ຈະຕາຍຍ້ອນຜູ້ຍິງນັ້ນດອກ, ແລ້ວແພະ ຕົວຜູ້ຈຶ່ງກ່າວສໂລກອັນນີ້ວ່າ:

"ດູລາແມ່ແພະ ພຣະຍາໂກໂກຣາດ ມີປະສົງຈະຂ້າກິນຕາຍເສັຽ ດ້ວຍຄວາມໃບ້ໂງ່ຂອງຕົນເອງ ພຽງແຕ່ໄດ້ຍິນຄຳອ້ອນວອນຂອງເມັຽທີ່ນັ້ນ ສ່ວນກູນີ້ບໍ່ໃບ້ໂງ່ຫລົງໃຫລ ພໍຈະຂ້າກິນຕາຍຍ້ອນຜູ້ຍິງ ເໝືອນດັ່ງ ພຣະຍາໂກໂກຣາດນັ້ນເລີຍ." ວ່າແລ້ວແພະຕົວຜູ້ກໍຂັບໄລ່ແພະຕົວເມັຽນັ້ນໜີເສັຽ.

ຝ່າຍພຣະຍາໂກໂກຣາດໄດ້ຍິນຄວາມແພະເວົ້າກັນດັ່ງນັ້ນ ຈຶ່ງໄດ້ສະຕິຮ່ຳເພິງໃນພຣະໄທວ່າ "ແຕ່ສັດເດັຽຣະສານ ມັນຍັງມີປັນຍາ ຮູ້ຮັກສາຊີວິດຂອງຕົນ ບໍ່ຫລົງໃຫລໃນຄຳອ້ອຍອິ່ນຂອງເມັຽ ສ່ວນຕົວກູເປັນເຖິງ.. ພຣະມະຫາກະສັດຂັດຕິຍະຣາດ ແລະຈະມາຕາຍຍ້ອນຄຳຜູ້ຍິງພິປານນີ້ ! ໂລກທັງຫລາຍກໍຈະຕິຕຽນກູເປັນອັນມາກ." ຮ່ຳເພິງແລ້ວກໍສະເດັດກັບຄືນພຣະຣາຊວັງ ຈັດສັ່ງໃຫ້ເອົານາງເທວີນັ້ນໄປປ່ອຍເສັຽໃນປ່າ ທີ່ໄກຈາກເຂດແດນມະນຸດ ແຕ່ນັ້ນມາພຣະຍາໂກໂກຣາດ ກໍຢູ່ສເວີຍຣາຊສົມບັດເປັນສຸກສືບມາ ເພາະສະນັ້ນ ຂ້າພະເຈົ້າ(ອະນຸພາຄຍະ)ຈຶ່ງວ່າ "ຖ້ອຍຄຳອັນເປັນປໂຍດ ແມ່ນຄົນຜູ້ເວົ້າຈະເປັນຄົນຊັ້ນຕ່ຳສານານກໍຕາມ ຜູ້ມີປັນຍາກໍຄວນເຊື່ອຟັງ ແລະ ປະຕິບັດຕາມ...."

ແລ້ວອະນຸພາຄຍະ ເວົ້າຕໍ່ໄປວ່າ: "ຂ້າແຕ່ພຣະຍາເນື້ອ ທີ່ແທ້ຂ້າພະເຈົ້ານີ້ກໍເປັນຜູ້ນ້ອຍ ມີຊີວິດຕິດເນື່ອງຢູ່ນຳພຣະບາດເປັນເຈົ້າ ແລະຈົງຮັກພັກດີຕໍ່ພຣະບາດເປັນເຈົ້າສເມີ ດັ່ງນັ້ນ ເມື່ອໄດ້ຍິນໄດ້ເຫັນອາການອັນຄວນສົງກາ ຈຶ່ງໄດ້ນຳມາຖແລງໃຫ້ເຈົ້າກູຮູ້ໄວ້, ຄືບັດນີ້ອ້າຍງົວນັນທະ-ກະ ມັນກຳລັງທ້າວຫານ ຄຶກຄະນອງຈອງຫອງ ຢາກເປັນຣາຊາໃນປ່ານີ້ ພຣະບາດເປັນເຈົ້າບໍ່ຄວນໄວ້ໃຈ ເພາະ ເພິ່ນວ່າ: "ບຸກຄົນບໍ່ຄວນໄວ້ວາງໃຈໃນແມ່ນ້ຳ, ໃນສັດຕົວມີເຂົາ, ໃນຄົນຜູ້ມີສາດຕາໃນມື, ໃນສັດຕີ ແລະໃນ

ພຣະຣາຊາພຣະມະຫາກະສັດ"

ຣາຊາປິງຄະລະ ກ່າວຕອບວ່າ: "ເອີ! ຈິງແລ! ເພາະວ່າອັດຊາໄສໃຈກໍຂອງສັດທັງຫລາຍນີ້ ຍາກທີ່ຈະຮູ້ໄດ້ແທ້ ສະນັ້ນ ເມື່ອທ່ານໄດ້ຮູ້ເຫັນ–ເຫດການອັນໃດ ທີ່ມັນຜິດສັງເກດ ຈຶ່ງມາບອກເຖີດ"

ພາຈອກ ອະນຸພາຄຍະ ຮັບຄຳແລ້ວກໍໜີໄປ.

ຢູ່ມາວັນນຶ່ງ ມະຫາເມກຕັ້ງເຄົ້າມືດ ບໍ່ນານພຣະພິຣຸນທິກໍຕົກລົງມາເປັນທ່າໃຫຍ່ ງົວນັນທະກະໄດ້ດື່ມນ້ຳອັນໃສສະນິດດີກໍມີໃຈຫ້າວຫານຄືກະນອງ ຈຶ່ງເອົາເຂົາທັງສອງແທງຈອມປວກຊິດຂາດໄປ ແລ້ວກໍຮ້ອງກ້ອງສນັ່ນ ໂດດເຕັ້ນໄປມາດ້ວຍຄວາມຫ້າວຫືນ.

ພາຈອກ ອະນຸພາຄຍະ ເຫັນເປັນໂອກາດດີທີ່ຈະໄດ້ຍົວະເຍົ້າໃຫ້–ຣາຊສີປະຫານງົວນັນທະກະຕາມປະສົງ ຈຶ່ງແລ່ນເຂົ້າໄປບອກຣາຊສີວ່າ:

"ຂ້າແຕ່ພຣະຣາຊາ ເຫດການທັງຫລາຍທີ່ຂ້າພະເຈົ້າໄດ້ເວົ້າມາແຕ່ກ່ອນນັ້ນ ບັດນີ້ໄດ້ເຫັນປະຈັກແລ້ວ ຄື ນັນທະກະ ມັນໂອຫັງຫອງເປັນຣາຊາ–ແທນພຣະບາດເປັນເຈົ້າໃນປ່ານີ້ ດຽວນີ້ມັນກຳລັງຕັ້ງທ່າຈະເອົ້າມາຊິງໄຊ ບໍ່ໄດ້ມີຄວາມຢຳແຢງຕໍ່ພຣະຣາຊາເຈົ້າ ສະນັ້ນ ບໍ່ຄວນລະມັນໄວ້ ຂ້າພະເຈົ້າພ້ອມດ້ວຍບໍລິວານ ຂໍອາສາໄປສັງຫານມັນເສັຽ ເອົາເລືອດເນື້ອຂອງມັນ ມາຖວາຍພຣະບາດເປັນເຈົ້າໃນເວລານີ້"

ຣາຊາປິງຄະລະ ໄດ້ຟັງດັ່ງນັ້ນຈຶ່ງຕອບວ່າ: "ດູລາມູນຕີອະນຸພາຄ–ຍະ ການທີ່ສູເຈົ້າຂັນອາສາຕາງກູນັ້ນດີແລ້ວ ແຕ່ເຫັນວ່າ ລຳພັງພວກສູເຈົ້າອາດຈະບໍ່ສູ້ກຳລັງນັນທະກະໄດ້ ມາ! ກູຈະໄປຈັດການກັບມັນເອງ."

ດັ່ງນັ້ນ ເທວະດາຕົນຮັກສາໂລກ ຈຶ່ງກ່າວສໂລກນີ້ວ່າ:–

"ພາຈອກຕົວຄ່ອຍຮ້າຍ     ມຸນຕີ
ກ່າວວາຈາສຽດສີ     ໃສ່ຄ້ອຍ
ຄວາຍທອດເນື້ອຣາຊສີ     ນອບນອບ
ມີຄຣາດຟັງຄວາມນ້ອຍ     ເນ່ງນ້ອມໂກທາ."

ຣາຊາປິງຄະລະ ອອກຈາກຄູ້ຳໄປ ໄດ້ເຫັນງົວນັນທະກະ ກົ້ມຫົວຊົນໂພນປວກຢູ່ດັ່ງນັ້ນ ກໍຄຶດວ່າ ນັນທະກະເປັນສັດຕູທີ່ຈະຕໍ່ສູ້ທຳລາຍຕົນສົມດັ່ງຄວາມຍົວະເຍົ້າສັບສົ່ຂອງພາຈອກແທ້ ຈຶ່ງຕັ້ງທ່າຍໍຂາໜ້າຂຶ້ນ ກາງຫູອ້າປາກ ຂຍາຍເລັບ ຍົກຫາງຟາດກະໂພກ ແລ້ວບັນລືສີຫະນາດ ສຽງດັງກ້ອງກຳປນາດໄປທົ່ວປ່າ ຝ່າຍງົວນັນທະກະເຫັນດັ່ງນັ້ນ ກໍເຂົ້າໃຈວ່າຣາຊສີຈະມາທຳລາຍຕົນ ສົມດັ່ງຄຳພາຈອກອະສຸພາຄຍະບອກໄວ້ທຸກປະການ ຈຶ່ງກົ້ມຫົວລົງຫ່າງຽງເຂົາໄວ້ຄອຍຊົນ ບໍ່ທັນດົນ ຣາຊສີກໍທະຍານເຂົ້າຄາບທື້ນ ສົ່ນພຶກພື້ນທັງສອງຕົວ ບັດນັ້ນງົວນັນທະກະຈຶ່ງຍໍຍົກເຂົາຂວິດເຂົ້າກ້ອງ ຖືກທ້ອງຣາຊສີ ທັງສອງສັດມີຣິດທີແຮງສເມີພາກ ເປັນແຕ່ກັນວິບາກສອງສະຫາຍ ຣາຊສີກັບງົວກໍເລີຍຕາຍໄປພ້ອມກັນ ໃນທີ່ນັ້ນແລ.

ເຫດດັ່ງນັ້ນ ເທວະດາຕົນຮັກສາໂລກ ຈຶ່ງກ່າວສໂລກນີ້ໄວ້ວ່າ:

"ນັນທະກະຟັງເຟີດກ້າ     ໂກດຊລຽງ
ກວັດແກວ່ງເຂົາດາຣຽງ     ຫລິບໄວ້
ຣາຊສີຄະໂຍງພຽງ     ຂົບຄາບ
ຫອບຫັກຄໍຂາດໄດ້     ທ່າວລົ້ມທັງຢືນ ໆ
ຣາຊສີສີງເຕັ້ນ     ໂຕນໄປ
ຈັບຈ່ອງຄໍຄາງໄສ     ເກື່ອຍຸກວ້າງ

(ຕໍ່ໜ້າ ໙໘)

ບັນທະກະແກ່ວງເຂົາໄກວ          ກອຍໃສ່

ແສວຖືກທ້ອງແທບຂ້າງ          ຂາດລີ້ນເຊຊໍາ."

ນາງຕັນໄຕມະຫາເທວີ ເລົ່ານິຍາຍທັງຫລາຍໃຫ້ນ້ອງສາວຂອງຕົນ ຜູ້ຊື່ວ່າ ນາງອິໄລວັນ ຟັງດັ່ງນີ້ແລ້ວ ຈຶ່ງກ່າວເປັນສໂລກອະນຸໂຍກຄໍາສອນ-ວ່າ:

"ເຈົ້າຊຸມນຸມນາຍ ທ້າວພຣະຍາຕົນເປັນໃຫຍ່ ເປັນປະທານແຫ່ງຄົນທັງຫລາຍ ເພິ່ງພິຈາຣະນາຕາມຕອງຕາມຮີດຄອງບູຮານະທັມຄໍາສອນແຫ່ງນັກ-ປາດເຈົ້າທັງຫລາຍ ດ້ວຍອຸບາຍອັນຊອບ ຢ່າປະກອບດ້ວຍໂມຫາ ຟັງຄໍາຜູ້ນີ້ ແຮງລັບສິ່ງຜິດຜອນ ຄ່ວນໄຕ່ຕອງດູດ້ວຍປັນຍາໃຫ້ແຈ້ງ ເຫັນແມ່ນແນ້ງແທ້ຈິງ ທໍາຕາມ ແລະ ຢ່າພິປອງກະທໍາໂທດ ມັກກື້ອໂກດໂກທາ ມີເຫິງສາປນາດ ຈັກເປັນດັ່ງງົວອູສູພະຣາດ ແລະ ຣາຊສີ ລະຄອງດີອັນຊອບມາປະກອບດ້ວຍ ໂມໂຫ ເລີຍເສັຽໂຕຕາຍເປົ່າ ເຫດຟັງແຕ່ຄວາມບໍ່ອະເຍົາຂອງຄົນພານ" ດັ່ງນີ້ແລ.

ຍາມນັ້ນ ພຣະຍາວິມະລະຈັກກະພັດຕິຣາດ ໄດ້ຍິນຕໍານານບູຮານ-ທັມຄໍາສອນອັນຂນາດ ແຫ່ງນັກປາດເຈົ້າແຕ່ພາຍຫລັງ ອັນນາງຕັນໄຕເລົ່າມາດັ່ງນີ້ ພຣະຍາກໍໃສ່ໃຈໄວ້ດີນັກ ເພື່ອຈັກຫວັງປະຕິບັດໃຫ້ຊອບແທ້ດີຫລີ, ແລ້ວພຣະຍາຈຶ່ງຕັ້ງນາງຕັນໄຕ ໄວ້ເປັນນາງເທວີຜູ້ເຊົ້າ ເນັ່ງໝຸ່ນເໜົາທຽມຕົນ ຕັ້ງແຕ່ນັ້ນມາແລ./.

--ພ++ສຸດບໍຣະບວນ+++--

---++++++++---

Program Material
given to
The Laos Ministry of Education
by
The Asia Foundation

Printed & Published by Kramol Tiranasar at Tiranasar Press
62 Pun Road, Bangkok, Thailand,
1960